“

ມີຄວາມຮູ້ ແຕ່ຖ້າຂາດ

ຈິນຕະນາການ ກໍໄຮ້ຄຸນຄ່າ...

”

ສະບາຍດີທ່ານຜູ້ອ່ານ,

ເມື່ອບໍ່ນານມານີ້, ຂ້າພະເຈົ້າໄດ້ທຳການລິເລີ່ມນຳເອົາເພງລາວເກົ່າ ມາກ່າຍຂຽນ ເປັນໂນຕສາກົນແລະເສບເປັນແບບດົນຕຣີບັນເລງ (ບໍ່ມີສຽງຂັບຮ້ອງນຳ), ຈຸດປະສົງ ແມ່ນບໍ່ໄດ້ຫວັງໃຫ້ບັນລຸຄວາມສົມບູນແບບ ໃນການຜະສົມປະສານສຽງ ຫຼືແນໃສ່ເອົາຄຸນນະພາບຂອງການບັນທຶກສຽງ ຫຼືວີດີໂອການເສບບັນເລງ ທາງດ້ານເຄື່ອງດົນຕຣີແຕ່ຢ່າງໃດ. ເພາະວ່າເປົ້າໝາຍ ບໍ່ແມ່ນເພື່ອສຳລັບການອອກເປັນ CD ຫຼື DVD. ແຕ່ວ່າ ມັນແມ່ນຄວາມປະສົງຢາກແລກປ່ຽນແລະແບ່ງປັນຄວາມຮູ້ ຄວາມສາມາດສ່ວນຕົວຂອງຂ້າພະເຈົ້າກັບຄົນອື່ນ (ຜູ້ທີ່ສົນໃຈ), ໂດຍສະເພາະ ແມ່ນອີງໃສ່ຂໍ້ມູນຕົ້ນສະບັບຂອງຜູ້ປຣະພັນເພງຕົ້ນຕໍເທົ່າທີ່ຄົ້ນຄວ້າແລະຊອກຫາມາໄດ້.

ແນ່ນອນວ່າ ມັນຍັງຈະບໍ່ສົມບູນແລະຍັງມີຂໍ້ຂາດຕົກບົກພ່ອງຢູ່ ແຕ່ຈະພະຍາຍາມດັດແປງແລະແກ້ໄຂຕາມເວລາອຳນວຍ.

ທັງນີ້ ແມ່ນເພື່ອໃຫ້ຄົນຮຸ່ນໃໝ່ແລະຮຸ່ນເກົ່າ ຫຼືຄົນຊາດອື່ນເຖິງວ່າຈະບໍ່ແມ່ນຄົນລາວ (ຖ້າຫາກວ່າພວກເຂົາເຈົ້າຫາກມີຄວາມສົນໃຈໃນສຽງເພງແລະດົນຕຣີລາວ ໂດຍສະເພາະແມ່ນຜູ້ທີ່ມີຄວາມສາມາດອ່ານແລະເຂົ້າໃຈໂນຕດົນຕຣີເປັນຫຼືບໍ່ເປັນກໍຕາມແຕ່) ໄດ້ມີບ່ອນອີງເປັນຂໍ້ມູນໃນການສຶກສາແລະຄົ້ນຄວ້າ. ຈຸດປະສົງກ່ອນອື່ນ ແມ່ນຫຼີກລ່ຽງການບິດເບືອນຕົ້ນສະບັບອັນດັ້ງເດີມ ກ່ຽວກັບ ຊື່ເພງ ຊື່ຜູ້ແຕ່ງ ນັກຮ້ອງຕົ້ນສະບັບ ເນື້ອເພງ ຣະດັບສຽງ ແລະ ຈັງຫວະຕົ້ນຕໍ.

ເນື່ອງຈາກວ່າໃນເວລາຫຼາຍປີທີ່ຜ່ານມາ, ຂ້າພະເຈົ້າໄດ້ຕິດຕາມແລະສັງເກດເຫັນວ່າ ໃນບັນດາການນຳເອົາເພງລາວເກົ່າມາບັນເລງແລະຂັບຮ້ອງໃໝ່ຈຳນວນໜຶ່ງ, ມີຂໍ້ຂາດຕົກບົກພ່ອງທາງດ້ານຊື່ເພງ ຊື່ຜູ້ແຕ່ງ ເນື້ອຮ້ອງທຳນອງແລະຈັງຫວະ. ມັນໄດ້ສ້າງຄວາມສັບສົນແລະຄວາມເຂົ້າໃຈຜິດ ມີການຂັດແຍ່ງຖົກຖຽງກັນໃນໝູ່ຜູ້ຟັງ ຫຼືນັກດົນຕຣີທີ່ພະຍາຍາມຈະເສບແລະບັນເລງໂດຍສະເພາະ.

ສາເຫດຄືງແມ່ນຍ້ອນຂາດຂໍ້ມູນ ຂໍ້ບັນທຶກຂີດຂຽນອັນຖືກຕ້ອງ ມີແຕ່ອາສັຍຄວາມຈື່ຈຳ ອັນມີຂອບເຂດຈຳກັດເປັນທີ່ເພິ່ງ ແລະບາງຈຳນວນກໍມີການເດົາເອົາກໍມີ ເພາະຂາດຄວາມແນ່ນອນໃຈ.

ຂ້າພະເຈົ້າເປັນຜູ້ໜຶ່ງ ທີ່ມີຄວາມມັກຮັກໃນສຽງເພງແລະດົນຕຣີລາວມາແຕ່ນ້ອຍ ບໍ່ເຄີຍໄດ້ເຂົ້າໂຮງຮຽນດົນຕຣີແຫ່ງໃດມາກ່ອນ ອາສັຍແຕ່ການສຶກສາ ແລະຄົ້ນຄວ້າດ້ວຍຕົນເອງຕລອດມາ ດ້ວຍຄວາມມັກຮັກແຕ່ຢ່າງດຽວ ເພາະເປັນຄົນມັກອ່ານແລະມີຈິດໃຈກະຕືລືລົ້ນຊອກຫາເຫດຜົນ.

ຂ້າພະເຈົ້າຄິດແລະເຂົ້າໃຈວ່າ ໂນຕດົນຕຣີສາກົນ (solfège)
ແມ່ນວິຊາສາດແລະທິດສະດີແນວໜຶ່ງ ຊຶ່ງເປັນພື້ນຖານຂອງດົນຕຣີແລະສຽງເພງ,
ເນື່ອງຈາກວ່າມັນແມ່ນລາຍລັກອັກສອນຂອງສຽງ ເຊັ່ນດຽວກັນກັບ
ການຂີດຂຽນຂອງພາສາປາກເວົ້າ. ມັນມີຣະບຽບແລະກົດເກນຂໍ້ບັງຄັບຂອງມັນເອງ
ເພື່ອບົ່ງບອກບົດເພງຈົນໄປຮອດການເສບບັນເລງດ້ວຍເຄື່ອງດົນຕຣີຕ່າງໆຢ່າງຄົບຖ້ວນ.
ຖ້າບໍ່ມີໂນຕແລະກົດເກນດັ່ງກ່າວ, ມັນກໍເປັນການຍາກແລະລຳບາກ
ໃນການຕິດຕໍ່ແລະສື່ສານກັບຄົນອື່ນ ແມ່ນແຕ່ການສົນທະນາລະຫວ່າງ
ນັກດົນຕຣີແລະນັກສິລະປິນດ້ວຍກັນ.
ເພາະທີ່ຜ່ານມາ ແມ່ນອາສັຍພຽງແຕ່ຄວາມຈື່ຈຳແລະຮັບຟັງດ້ວຍຫູ ແບບຖ່ອງຂຶ້ນໃຈ
ສ່ວນການບັນທຶກຂີດຂຽນແມ່ນບໍ່ມີຫຼັກການພຽງພໍແລະບໍ່ຄົບຖ້ວນສົມບູນຕາມແບບສາກົນ.

ຂ້າພະເຈົ້າບໍ່ຫານຍົກເອົາຄວາມຮູ້ທາງດ້ານໂນຕດົນຕຣີທີ່ໄດ້ຮ່ຳຮຽນດ້ວຍຕົນເອງ
ມາເປັນຫຼັກອ້າງອີງເພື່ອສັ່ງສອນຫຼືຕັດສິນຕຳນິຕິຕຽນນັກສິລປິນ ຜູ້ທີ່ບໍ່ມີໂອກາດ
ຫຼືເວລາໃນການຮຽນຮູ້ທິດສະດີດົນຕຣີ ເພາະບາງທີຍ້ອນເຫດຜົນສ່ວນຕົວຫຼືອື່ນໆ,
ເພາະສັງເກດເຫັນວ່າ ຜ່ານມາພວກເຂົາເຈົ້າກໍສາມາດເຮັດປຣະດິດຄິດສ້າງບົດເພງຂຶ້ນມາໄດ້
ຈົນສຳເຣັດເປັນຜົນງານ ແລະກາຍເປັນມໍລະດົກອະມະຕະ
ໃຫ້ພວກເຮົາໄດ້ເຫັນແລະໄດ້ຟັງຈົນເທົ່າສູ່ມື້ນີ້...

ທັງຫມົດນີ້ ພາໃຫ້ຂ້າພະເຈົ້າຕັດສິນໃຈ ລົງມືທຳການຣິບໂຮມ
ແລະແບ່ງປັນເພງລາວອະມະຕະຈຳນວນນຶ່ງ ເປັນໂນຕສາກົນ ພ້ອມດ້ວຍເນື້ອຮ້ອງ ແລະ
ທຳນອງຈັງຫວະ ໂດຍບໍ່ຍົກເວັ້ນການລະບຸຊື່ຂອງຜູ່ປຣະພັນແລະຜູ່ຂັບຮ້ອງຕົ້ນສະບັບ
ດ້ວຍຄວາມເຄົາຣົບແລະນັບຖື ບັນດານັກປຣະພັນເພງຜູ້ອາວຸໂສ ຊຶ່ງມີຈຳນວນນຶ່ງ
ຍັງມີຊີວິດຢູ່ແລະບາງທ່ານກໍດຳລົງຊີວິດກະແຈກກະຈາຍຢູ່ທົ່ວທະວີບ.

ອີກປຣະການນຶ່ງ ວີດີໂອທີ່ຂ້າພະເຈົ້າປຣະດິດຂຶ້ນເພື່ອປຣະກອບບົດເພງທັງໝົດ
ໂດຍອາສັຍເຄື່ອງດົນຕຣີສາກົນຕົ້ນຕໍຊື່ງຮຽກວ່າ "ອໍແກນອັຕໂນມັດ" (Arranger
Keyboard / Clavier Arrangeur) ເສບບັນເລງ ແມ່ນເປັນພຽງແບບຢ່າງ
ໃຫ້ສຶກສາຄົ້ນຄວ້າຕໍ່ໄປ ບໍ່ໃຫ້ຖືເອົາເປັນຫຼັກຕາຍຕົວໃນການຢັ້ງຢືນຂອງບົດເພງ.

ສຸດທ້າຍ ຂໍຂອບໃຈແລະຂໍສະແດງຄວາມຮູ້ບຸນຄຸນບັນດາຄູບາອາຈານ ນັກປຣະພັນ
ແລະນັກສິລປິນລາວຮຸ່ນອາວຸໂສທຸກໆທ່ານ ທີ່ໄດ້ສ້າງຜົນງານ ບົດເພງຕ່າງໆ
ໄວ້ໃຫ້ປວງຊົນໄດ້ຊື່ນຊົມແລະຄົ້ນຄວ້າສຶກສາຮ່ຳຮຽນສືບຕໍ່ໃຫ້ຍືນຍາວຕລອດການນານ.

ດ້ວຍຄວາມຮັກແພງ
ພົງສມອນ ດາວົງສ໌
Paris, ວັນທີ່ 24/06/2016



## ສາຣະບານ ດົນຕຣີບັນເລງເພງລາວອະມະຕະ
## ພ້ອມໂນຕສາກົນ ແລະເນື້ອຮ້ອງ
## ເລີ່ມຕົ້ນຮິບໂຮມແລະເຜີຍແຜ່ : ວັນທີ່ 24/06/2016

# ມະຍຸຣີ

ເນື້ອຮ້ອງ & ທຳນອງ : ອໍຣະເດດ ດິດທະວົງສ໌
ນັກຮ້ອງຕົ້ນສະບັບ : ອໍຣະເດດ ດິດທະວົງສ໌

~ 197?

Slow Rock (♩ = 72)

Bm G D F♯
ມະ ຍຸ - ຣີ... ມະ ຍຸ - ຣີ... ມະ ຍຸ -

A
1 Bm G D Em A
ຣີ ນ້ອງ ເປັນ ຍິງ ທີ່ ອ້າຍ ຮັກ ສ ເມີ ຫຼັບ ກໍ

4 D Bm Em A F♯
ຝັນ ຕື່ນ ກໍ ເພີ້ - ລະ ເມີ ຄອນ ຄາງ... ມະ ຍຸ -

B
8 Bm G D Em A
ຣີ ຫົວ ໃຈ ດວງ ນີ້ ຂໍ ມອບ ໃຫ້ ນາງ ນ້ອງ ຄືນ

11 D Bm Em A D
ດຽວ ທີ່ ອ້າຍ ຫວັງ - ໝາຍ ເປັນ ຄູ່ ຄອງ... ອ້າຍ ຢາກ

C
14 A Bm Em A F♯m
ຢູ່ ຢາກ ຢູ່ ໃກ້ ເນື້ອ ທອງ ຄູ່ ຄຽງ ນ້ອງ ສຸກ ສົມ

17 G D F♯
ປອງ ຊື່ອ ນິ ຣັນ... ມະ ຍຸ -

D
20 Bm G D Em A
ຣີ ນ້ອງ ເປັນ ຍິງ ທີ່ ໜ້າ ຮັກ ສົງ ສານ ອ້າຍ ຈະ

23 D Bm Em A D F♯
ຮັກ ແຕ່ ຈອມ ຂວັນ - ຊື່ອ ນິ ຣັນ ເອີຍ...

(Solo verse A & B)

Coda 𝄌

E
27 Bm G D F♯ Bm Bm9
(Coda)

Fine

# ມະຍຸຣີ

Key : D
Slow Rock

ເນື້ອຮ້ອງ & ທຳນອງ : ອໍຣະເດດ ດິດທະວົງສ໌
ນັກຮ້ອງຕົ້ນສະບັບ : ອໍຣະເດດ ດິດທະວົງສ໌

~1970

ມະຍຸຣີ... ມະຍຸຣີ...

1) ມະຍຸຣີ...
ນ້ອງເປັນຍິງທີ່ ອ້າຍຮັກສເມີ
ຫຼັບກໍຝັນ ຕື່ນກໍເພີ້
ລະເມີ ຄອນຄາງ

2) ມະຍຸຣີ...
ຫົວໃຈດວງນີ້ ຂໍມອບໃຫ້ນາງ
ນ້ອງຄືນດຽວ ທີ່ອ້າຍຫວັງ
ໝາຍເປັນ ຄູ່ຄອງ

• ອ້າຍຢາກຢູ່ ຢາກຢູ່ໃກ້ເນື້ອທອງ
ຄູ່ຄຽງນ້ອງ ສຸກສົມປອງຊື່ອນິຣັນ

3) ມະຍຸຣີ...
ນ້ອງເປັນຍິງທີ່ ໜ້າຮັກສິງສານ
ອ້າຍຈະຮັກ ແຕ່ຈອມຂວັນ
ຊື່ອ ນິຣັນເອີຍ...

# ເໝືອນຄືນແຮມ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1962-63

(Slow Rock) ♩ = 80

Am D C D7 G

(Intro) ______ 8 ------

**A**

1 G G7 C
ຄືນ ນີ່ງ ມີ ເຮົາ ສອງ ຄົນ______ ແອບ ອີງ ກັນ ຈົນ ຟ້າ ສ ວ່າງ

5 D C A7
ເຊີຍ ຊົມ ຊູ ຊິດ ຄຽງ ຂ້າງ ບໍ່ ໄກ - ຫ່າງ ຫ່າງ ພຽງ ອີດ ໃຈ...

**B**

9 D7 G G7 C
ແສນ ສຸກ ອື່ນ ໃດ ໃສ ທັນ______ ປຽບ ປານ ຍາມ ສອງ ເຮົາ ຊິດ ໃກ້

13 D D7 G C
ດວງ ເດືອນ ກໍ ເໝືອນ ເປັນ ໃຈ ຫຼີບ ເມກ - ໄປ ໃຫ້ ເຮົາ ສຸກ ສົມ...

**C**

17 G E Am D C G
ຈະ ອາຍ ຟ້າ ຫຼື ອາຍ ຈັນ______ ແຕ່ ຕາ ນ້ອງ ນັ້ນ ອອນ ໃຫ້ ຊິດ ຊົມ ດັ່ງ ຈະ ອອນ

21 C Am D G Em
ຈູບ ອອນ ໃຫ້ ລູບ ໂລມ ໝ່ຽວ ໃຈ ໃຫ້ ໂນ້ມ ໂລມ ລູບ ຈູບ ນ້ອງ...

**D**

25 G G7 C
ຄວາມ ສຸກ ຕ້ອງ ກາຍ ເໝືອນ ຝັນ______ ດັ່ງ ນີ່ງ ດວງ ຈັນ ທີ່ ໃສ ສ່ອງ

29 D D7 To Coda 1. G C
ຄືນ ແຮມ ກໍ ລັບ ອັບ ແສງ ທອງ ສຸດ ເສົ້າ - ໝອງ ຍາມ ນ້ອງ ຈາກ ຈອນ...

(Solo verse B)

Coda

**E**

33 2. G C G D G
ຈອນ... (Coda) ______

Fine

# ເໝືອນຄືນແຮມ

Key : G
Slow Rock

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1962-63

1) ຄືນນີ້ງມີເຮົາ ສອງຄົນ
ແອບອີງກັນຈົນ ຟ້າສວ່າງ
ເຊີຍຊົມຊູຊິດ ຄຽງຂ້າງ
ບໍ່ໄກຫ່າງ ຫ່າງພຽງອືດໃຈ

2) ແສນສຸກອື່ນໃດ ໃສທັນ
ປຽບປານຍາມສອງ ເຮົາຊິດໃກ້
ດວງເດືອນກໍເໝືອນ ເປັນໃຈ
ຫຼົບເມກໄປ ໃຫ້ເຮົາສຸກສົມ

• ຈະອາຍຟ້າຫຼື ອາຍຈັນ
ແຕ່ຕານ້ອງນັ້ນ ວອນໃຫ້ຊິດຊົມ
ດັ່ງຈະວອນຈູບ ວອນໃຫ້ລູບໂລມ
ໜ່ຽວໃຈໃຫ້ໂນ້ມ ໂລມລູບຈູບນ້ອງ

3) ຄວາມສຸກຕ້ອງກາຍ ເໝືອນຝັນ
ດັ່ງນີ້ງດວງຈັນ ທີ່ໃສສ່ອງ
ຄືນແຮມກໍລັບ ອັບແສງທອງ
ສຸດເສົ້າໝອງ ຍາມນ້ອງຈາກຈອນ...

# ເພື່ອນ້ອງເມື່ອຊ້ຳ

ເນື້ອຮ້ອງ & ທຳນອງ : ດາວວົງ ນໍຣະສິງ

ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1962-63


















# ເພື່ອນ້ອງເມື່ອຊ້ຳ

Key : A
Slow Ballad

ເນື້ອຮ້ອງ & ທຳນອງ : ດາວວົງ ບໍຣະສິງ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1962-63

1) ອ້າຍເຈັບຊ້ຳໃນ ຈາກນ້ອງພຽງໃດ
ດັ່ງຟ້າຜ່າລົງຫົວໃຈ ເກືອບຈະຕາຍເພາະຮັກນ້ອງນັ້ນ
ສູ້ທົນຂົມຂື່ນ ເຝົ້າຝັນແຕ່ຈາບັນ
ອຶດແຂງອຶດໂຂໃຈກັ້ນ ນ້ອງຍັງຫັນໜ້າບໍ່ມອງ

2) ນ້ອງຕັດສຳພັນ ຈາກອ້າຍໄປໄກ
ຕັດຮັກຕັດຄວາມສົນໃຈ ຈາກກັນໄປດັ່ງນ້ຳໄຫຼລ່ອງ
ນ້ອງໜີອ້າຍໄປ ຖິ້ມໄວ້ແຕ່ຄວາມໝອງ
ຖອດຮັກຖອດຄວາມສົມປອງ ໃຫ້ອ້າຍໝອງໝົ່ນວິນຍາ

• ຈາກອ້າຍໄປດີ ເຖີດນ້ອງ
ຈົ່ງໄປໃຫ້ພົບຂຸມທອງ ທີ່ໃຈນ້ອງໃຝ່ປຣາຖນາ
ຈົ່ງໄປຫາຄົນ ທີ່ນອນນ້ອງເຝົ້າຝັນຫາ
ຫາກເຂົາສິ້ນຄວາມເມຕຕາ ຈົ່ງມອງຟ້າດູດາວດວງເກົ່າ

3) ເມື່ອໝົດຫົນທາງ ຈົ່ງຫວນຄືນມາ
ຊາດນີ້ຈະລໍຂວັນຕາ ຈິດໃຝ່ຫາສເມີເໝືອນເກົ່າ
ອ້າຍຍັງຝັນໃຈ ຫ່ວງໃຍທຸກຄ່ຳເຊົ້າ
ໂປຣດນ້ອງກັບຄືນຮັງເກົ່າ ສ້າງຮັກເຮົາດັ່ງເກົ່ານາ...

# ເພລາຣາຕຣີ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ

ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1962-63






























# ເພລາຣາຕຣີ

Key : B
Slow Rock

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1962-63

1) ໃກ້ຣາຕຣີແລ້ວ ແກ້ວຕາ
ມວນນິກກາ ຕ່າງບິນກັບຮັງນອນ
ສຸຣິໂຍ ລັບແລງແສງເຮືອງອ່ອນ
ນ້ອງບໍ່ສະທ້ອນ ຫຼືໃຈ

2) ຍ່າງຣາຕຣີແລ້ວ ແກ້ວຂວັນ
ພາງແສງຈັນ ສາດສີຜ່ອງອຳໄພ
ໂອ້ຄືນເພັນ ເຫັນວັງຟ້າກວ້າງໃຫຍ່
ງາມສໄວ ຮອບດວງຈັນ

• ຫຼືບຢູ່ໃສນໍ ຄືນຮັກຂ້າ
ຊອກຊອນຫາ ທີ່ວໃນດວງຈັນ
ກໍເຮົາເຄີຍ ນັດມາເຈີະກັນ
ໃຕ້ດວງຈັນ ດວງນີ້

3) ຂ້ອນຣາຕຣີແລ້ວ ແກ້ວໃຈ
ມອງຫົນໃດ ມືດຟ້າໝົ່ນຣາຕຣີ
ບໍ່ມີພຣງ ແມ້ນເງົານ້ອງຫຼືນີ້
ຣາຕຣີນີ້ ສຸດວັງເວງ (ຊ່າງວັງເວງ)...

# ພິສຮັກ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ທັນຕະວັນ ຣາຊາສັກດ໌

1962-63

Slow Rock (♩ = 84)

F♯ G♯m6 C♯7 D♯m B

(Intro)

**A**

1 C♯7 F♯ G♯m6 F♯ D♯7

ພິສແຫ່ງຄວາມຮັກ ຫາ ກໍ ປະ ຈັກ ມັນ ແຄ້ນ ມັນ ແໜ້ນ ອົກ ໜັກ ຄວາມຮັກ ເມື່ອ ມັນ ທຳ ເຮົາ ມັນ ແສບ ມັນ

5 G♯m C♯7 B G♯7

ຊ້ຳ ຣະ ກັມ ຍິ່ງ ກວ່າ ໄຟ ເຜົາ ມັນ ໂສກ ມັນ ແສນ ຈະ ເສົ້າ ຍິ່ງ ກວ່າ ຄວາມ ເສົ້າ ໃດ ໆ...

**B**

9 C♯7 F♯ G♯m6 F♯ D♯7

ຫຼົງ ຫຼົ້ນ ກັບ ຮັກ ເພາະ ໃຈ ສ ມັກ ດ້ອຍ ຄິດ ດ້ອຍ ຢາກ ມີ ຮັກ ເອົາ ໄວ້ ເປັນ ເຄື່ອງ ຊູ ໃຈ ດ້ອຍ ວ່າ ຄວາມ

13 G♯m C♯7 B C♯ F♯ B

ຮັກ ໄດ້ ຍິນ ເຂົາ ກ່າວ ກັນ ໄວ້ ມັນ ປຽບ ສະເໝືອນ ເພື່ອນ ໃຈ ມີ ໄວ້ ປອບ ໃຈ ເມື່ອ ເຫງົາ...

**C**

17 F♯ A♯m D♯m B G♯m A♯m F♯

ຖືກ ແລ້ວ ມີ ຮັກ ຂ້າ ຝັນ ຂ້າ ໃຝ່ ເພາະ ມີ ພ ລັງ ແຮງ ໃຈ ສຸກ ເລື້ອຍ ໄປ ບໍ່ ມີ ຍາມ ເຫງົາ ທີ່ ແທ້ ຄວາມ

21 D♯m B C♯ D♯m B G♯7

ຮັກ ຮ້າຍ ຈິງ ຍິ່ງ ພິສ ງູ ເຫົ່າ ພໍ ຮັກ ມັນ ຫັກ ອົກ ເຮົາ ຈຶ່ງ ໂສກ ເສົ້າ - ຂົມ ຂື່ນ...

**D**

25 C♯7 F♯ G♯m6 F♯ D♯7

ຫຼົງ ຫຼົ້ນ ກັບ ຮັກ ເສັຽ ຈົນ ໃຈ ຫັກ ຕົກ ຂຸມ ຕິດ ບ້ວງ ຄວາມ ຮັກ ຍາກ ໜັກ ຈະ ກ້າວ ເດີນ ຄືນ ຕ້ອງ ເຈັບ ຕ້ອງ

29 G♯m C♯7 B C♯ To Coda F♯ B

1.

ແຄ້ນ ແໜ້ນ ໃຈ ເຫຼືອ ສຸດ ຈະ ຝືນ ຄວາມ ສຸກ ຄວາມ ຝັນ ເຄີຍ ຊື່ນ ບັດ ນີ້ ກັບ ຄືນ ຫ່າງ ຫາຍ...

(Solo verse B)

**E**

Coda

33 F♯ B F♯6 B F♯ F♯maj7

2.

ຫາຍ... (Coda)

Fine

# ພິສຮັກ

Key : F#
Slow Rock

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ທັນຕະອັນ ຣາຊາສັກດ໌

1962-63

1) ພິສແຫ່ງຄວາມຮັກ ຫາກໍປະຈັກ
ມັນແຄ້ນມັນແໜ້ນອີກໜັກ ຄວາມຮັກເມື່ອມັນທຳເຮົາ
ມັນແສບມັນຊ້ຳ ຣະກັມຍິ່ງກວ່າໄຟເຜົາ
ມັນໂສກມັນແສນຈະເສົ້າ ຍິ່ງກວ່າຄວາມເສົ້າໃດໆ

2) ຫຼົງຫຼິ້ນກັບຮັກ ເພາະໃຈສມັກ
ດ້ອຍຄິດດ້ອຍຢາກມີຮັກ ເອົາໄວ້ເປັນເຄື່ອງຊູໃຈ
ດ້ອຍວ່າຄວາມຮັກ ໄດ້ຍິນເຂົາກ່າວກັນໄວ້
ມັນປຽບສະເໝືອນເພື່ອນໃຈ ມີໄວ້ປອບໃຈເມື່ອເຫງົາ

• ຖືກແລ້ວມີຮັກ ຂ້າຝັນຂ້າໃຝ່
ເພາະມີພລັງແຮງໃຈ ສຸກເລື້ອຍໄປບໍ່ມີຍາມເຫງົາ
ທີ່ແທ້ຄວາມຮັກ ຮ້າຍຈິງຍິ່ງພິສງູເຫົ່າ
ພໍຮັກມັນຫັກອົກເຮົາ ຈຶ່ງໂສກເສົ້າຂົມຂື່ນ

3) ຫຼົງຫຼິ້ນກັບຮັກ ເສັຽຈົນໃຈຫັກ
ຕົກຂຸມຕິດບ້ວງຄວາມຮັກ ຍາກໜັກຈະກ້າວເດີນຄືນ
ຕ້ອງເຈັບຕ້ອງແຄ້ນ ແໜ້ນໃຈເຫຼືອສຸດຈະຝືນ
ຄວາມສຸກຄວາມຝັນເຄີຍຊື່ນ ບັດນີ້ກັບຄືນຫ່າງຫາຍ...

# ຄອຍວັນອິສຣະພາບ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ

ນັກຮ້ອງຕົ້ນສະບັບ : ທັນຕະວັນ ຣາຊາສັກດ໌

1962-63






























# ຄອຍວັນອິສຣະພາບ

Key : Eb　　　ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
Slow　　　ນັກຮ້ອງຕົ້ນສະບັບ : ທັນຕະວັນ ຣາຊາສັກດ໌　　　1962-63

1) ໂອ້ຊີວິດ　　　ພຣະເຈົ້າອີງໃດຂີດມາ
ໂຊກຊາຕາ　　　ເກີດມາພົບແຕ່ຄວາມເສົ້າ
ສຸດຣະກຳ　　　ນ້ຳຕາໄຫຼນອງເຊັດເຊົ່າ
ທຸກຄ່ຳເຊົ້າ　　　(ສູ້) ທົນຝືນ

2) ຕັ້ງແຕ່ນ້ອຍ　　　ເລື້ອຍມາຈົນຈະແກ່ກາຍ
ຕ້ອງອາສັຍ　　　ຢູ່ພາຍໃຕ້ເງົາຄົນອື່ນ
ເພິ່ງໃນບຸນ　　　ສຸນທານທີ່ຄົນຢິບຢື່ນ
ຕ້ອງຈຳຝືນ　　　ສູ້ທົນ

• ຢາກຈະມີຄົນຮັກ　　　ຊ່ວຍສ່ອງທາງ
ອີກມີພ້ອມທຸກຢ່າງ　　　ທີ່ເປັນຂອງຕົນ
ໄດ້ແຕ່ວິ່ງວອນ　　　ຟ້າທີ່ສຖິດເບື້ອງບົນ
ຊ່ວຍນຳຂ້າພົ້ນ　　　ປວງມານ

3) ດຸດນົກນ້ອຍ　　　ທີ່ຄອຍອາສັຍຣົ່ມໄມ້
ອີກເມື່ອໃດ　　　ຈະມີຜູ່ມາໝາຍໝັ້ນ
ໄດ້ແຕ່ຄອຍ　　　ຫຼິງຄອຍເສັຽຈົນໃຈຫວັ່ນ
ສຸດໂສກສັນ　　　ເສົ້າໃຈ...

# ກ່ອນສິ້ນສັມພັນ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ

ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1962-63


















# ກ່ອນສິ້ນສັມພັນ

Key : E
Slow Rock

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1962-63

1) ຢ່າງນ້ອຍທີ່ສຸດ ກໍເຄີຍຮັກກັນ
ເຄີຍຮ່ວມສາບານ ຜູກພັນຮັກໝັ້ນແໜ້ນໜາ
ຫາກຈະລອງນຶກ ເຖິງພາບເກົ່າມາ
ຢ່າງນ້ອຍຄືງຈຳໄດ້ວ່າ ເຮົາສອງຮັກກັນເທົ່າໃດ

2) ຢ່າງນ້ອຍທີ່ສຸດ ກ່ອນຕັດຮັກກັນ
ກ່ອນສິ້ນສັມພັນ ບັ້ນທາງຮັກນັ້ນສລາຍ
ກໍຄວນບອກກັນ ໃຫ້ຮູ້ຈຸດໝາຍ
ເຫດຜົນທີ່ຕ້ອງຮ້າງໄກ ສັນໃດຈິ່ງຕ້ອງໄກກັນ

• ຢູ່ໆກໍມາ ປ່ຽນໃຈ
ຮ້າງຮັກແຮມໄກ ໄຮ້ຄວາມສົງສານ
ບໍ່ມີເຫດຜົນ ເມື່ອຍາມຈາກລາ
ບໍ່ມີເມຕຕາ ເມື່ອຍາມຮ້າງກັນ
ຕັດຂາດບາດດຽວ ເໝືອນແກ້ງປຣະຫານ
ຕັດສັມພັນ ຮັກເຮົາ

3) ນີ້ນ້ອງລືງໂທດ ໂກດອ້າຍເຣື່ອງໃດ
ຈິ່ງປັດຮັກໄປ ປ່ອຍໃຈອ້າຍໃຫ້ງຽບເຫງົາ
ຖິ້ມຄວາມຂື່ນຂົມ ຖົມທັບອົກເຮົາ
ຈາກໄປບໍ່ເຫຼືອແມ້ນເງົາ ໃຫ້ເຮົາໄດ້ສັ່ງອຳລາ...

# ຮັກກັນເຖີດໜໍ່ທີ່ຮັກ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1972






























# ຮັກກັນເຖິດໜໍທີ່ຮັກ

Key : Bb
Tango

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1972

1) ຮັກກັນເຖິດໜໍ ທີ່ຮັກ
ຮັກກັນເພື່ອຂ້າ ເວລາ
ຮັກກັນໃຫ້ໂລກ ອິດສາ
ຮັກກັນຈົນກວ່າ ເທົ່າຜອງໃດໆ

2) ຮັກກັນເພື່ອລືມ ຄວາມທຸກ
ເພື່ອລືມຄວາມອຸກ ເອົ້າໃຈ
ຮັກກັນໃຫ້ໂລກ ສົດໃສ
ຮັກກັນເພື່ອຄາຍ ຄວາມໝອງເສົ້າ

• ຊີວິດນີ້ສັ້ນ ນີ້ສັ້ນຈິງນັກ
ຮີບເຖິດມາຮັກ ຮັກກັນເທາະເອິາ
ເມື່ອຍາມວັຍໜຸ່ມ ຮີບຕັກຕວງເອິາ
ຊ້າໄປຈະເສົ້າ ເສັຽດາຍ

3) ຮັກກັນເຖິດໜໍ ທີ່ຮັກ
ຮັກກັນເພື່ອຖ້າ ວັນຕາຍ
ຮັກກັນເພື່ອສ້າງ ຄວາມໝາຍ
ຮັກໃຫ້ຈິດໃຈ ເຮົາຊື່ນຊົມ...

# ຢ້ານ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ

1963

Rumba (♩ = 90)

C Em7 Dm7 G G
1. 2.
(Intro)

A
1
G Am C G
ຢ້ານ ແຕ່ ຄວາມ ຮັກ ຈະ ໝອງ ຢ້ານ ມີ ເຈົ້າ ຂອງ ອີກ ຄົນ

5
F Dm G Em
ຢ້ານ ໝີ ຄວາມ ເສົ້າ ບໍ່ ພົ້ນ ຢ້ານ ຄົນ ເຂົາ ແໜງ ໜ່າຍ...

B
9
C G Am C G
ຢ້ານ ຮັກ ບໍ່ ສົມ ດັ່ງ ຫວັງ ຢ້ານ ມີ ຄົນ ຂວາງ ຂັດ ໄວ້

13
F Dm G C
ຢ້ານ ເຂົາ ໃຈ ອ່ອນ ເອນ ໄຫວ ຢ້ານ ຕາຍ ຮັກ ກັບ ຄົນ...

C
17
C7 Dm G Em
ຮູ້ ແລ້ວ ວ່າ ເຈົ້າ ຍັງ ພັກ ຮູ້ ແລ້ວ ວ່າ ຮັກ ຍັງ ຊື່ນ

21
Am F D7 G
ຢ້ານ ຄວາມ ກົ່ນ ແກ້ງ ຄົນ ອື່ນ ຢ້ານ ກືນ ນ້ຳ ຕາ ຈົນ ໄດ້...

D.S.

D
25
G Am C G
ຢ້ານ ແຕ່ ຄວາມ ຝັນ ມືດ ມົວ ຢ້ານ ຄົນ ຈະ ຍົວະ ໃຫ້ ອາຍ

29
F Dm G C
ຢ້ານ ເຫຼືອ ພຽງ ຊາກ ຮັກ ໄວ້ ຢ້ານ ຕາຍ ເພາະ ຜິດ ຫວັງ... (Solo verse C)

Coda

E
33
C Em7 Dm7 G
1.
(Coda)

37
G Fm C
2.
(Out)

Fine

# ຢ້ານ

Key : C
ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
Rumba Beguine
ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ
1963

1) ຢ້ານແຕ່ຄວາມຮັກ ຈະໝອງ
ຢ້ານມີເຈົ້າຂອງ ອີກຄົນ
ຢ້ານໝົດຄວາມເສົ້າ ບໍ່ພົ້ນ
ຢ້ານຄົນເຂົາ ແໜງໜ່າຍ

2) ຢ້ານຮັກບໍ່ສົມ ດັ່ງຫວັງ
ຢ້ານມີຄົນຂວາງ ຂັດໄວ້
ຢ້ານເຂົາໃຈອ່ອນ ເອນໄຫວ
ຢ້ານຄາຍຮັກ ກັບຄົນ

• ຮູ້ແລ້ວວ່າເຈົ້າ ຍັງພັກ
ຮູ້ແລ້ວວ່າຮັກ ຍັງຊື່ນ
ຢ້ານຄວາມກັ່ນແກ້ງ ຄົນອື່ນ
ຢ້ານກືນນ້ຳຕາ ຈືນໄດ້

3) ຢ້ານແຕ່ຄວາມຝັນ ມືດມົວ
ຢ້ານຄົນຈະຍົວະ ໃຫ້ອາຍ
ຢ້ານເຫຼືອພຽງຊາກ ຮັກໄວ້
ຢ້ານຕາຍເພາະ ຜິດຫວັງ...

# ບ້ານເຮົາ

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ
ນັກຮ້ອງຕົ້ນສະບັບ : ສີລາວົງ ແກ້ວ

1972

































# ບ້ານເຮົາ

Key : Ab
Slow Rumba

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ
ນັກຮ້ອງຕົ້ນສະບັບ : ສີລາວົງ ແກ້ວ

1972

1) ບ້ານເຮົາ ນີ້ງາມເຫຼືອຫຼາຍ
ຖິ່ນໃດ ຈະມາງາມທັນ
ບ້ານເຮົາ ມີທຸກສິ່ງອັນ
ສວັນ ເສກສັນສ້າງມາ

2) ບ້ານເຮົາ ມີທັມມະຊາດ
ທິວທັດ ກໍງາມເຢັນຕາ
ບ້ານເຮົາ ສວຍງາມໜັກໜາ
ລືຊາ ໄປທຸກທີ່ນແຫ່ງ

• | ຕະວັນ ຄ່ຳຄ້ອຍຈອນຈາກໂລກາ
ສ່ອງທາຣາ ງາມຕາຂອບຟ້າຍາມແລງ
ສຸຣິຍາ ເວລາໃກ້ຈະສິ້ນແສງ
ທຸກທີ່ນແຫ່ງ ເໝືອນດັ່ງຢູ່ແດນວິມານ

3) ບ້ານເຮົາ ນີ້ງາມໜັກໜາ
ເທວາ ຊົງສ້າງປຣະທານ
ບ້ານເຮົາ ເປັນແດນສວັນ
ສຸກສັນ ຊື່ນຊົມຣື່ນເຢັນ...

# ກ່ອນຈະຮັກກັນ

ເນື້ອຮ້ອງ & ທຳນອງ : ສ. ແສງສິຮິວັນ
ນັກຮ້ອງຕົ້ນສະບັບ : ສ. ແສງສິຮິວັນ

1973

Soul Tango (♩ = 103)

Ab Eb Fm

(Intro) ________

**A**

Eb Ab Cm Fm Db Eb

ຄືນ ເຮົາ ກ່ອນ ຈະ ຮັກ ກັນ________ ສິ່ງ ຄວາມ ສັມ ພັນ ທາງ ຕາ

Ab Fm Bb Eb

ຮອຍ ຍິ້ມ ກໍ ປ່ອຍ ອອກ ມາ ຍິ້ມ ຢ່າງ ສັດ ທາ____ ໃຊ້ ແທນ ວາ ຈາ ທັກ ທາຍ...

**B**

Eb Ab Cm Fm Db Eb

ຍາມ ໃດ ທີ່ ເຫັນ ໜ້າ ກັນ________ ຈິດ ໃຈ ຕື້ນ ຕັນ ແທບ ວາຍ____

Ab Fm Bbm Eb Ab

ຄວາມຮັກ ທີ່ ຫຼັບ ຢູ່ ໃນ ລຸກ ຂຶ້ນ ທັນ ໃດ____ ໄຂ ປະ ຕູ ໃຈ ອອກ ມາ...____

**C**

Eb Ab Db Eb Ab Cm

ຕາ ຕໍ່ ຕາ ປະ ສານ____ ກັນ____ ສຸດ ສະ ທ້ານ ໄປ ທໍ່ວ ອຸ ຣາ

Fm Db Bb Eb

ຄວາມ ຮັກ ເຣີ່ມ ກໍ່ ຕໍ່ ຈາກ ສາຍ - ຕາ - ຄວາມ ປາ ຖ ນາ ລອຍ ຕາມ...

**D**

Eb Ab Cm Fm Db Eb

ດວງ ໃຈ ເກັບຄວາມ ຮູ້ ສຶກ________ ສ ມອງ ກໍ ນຶກ ທາບ ທາມ____

Ab Fm Bbm Eb Ab

ອາ ຣົມເຣີ່ມສັ່ນ ຈິດ ຫວາມ ເມື່ອຢາກ ຈະ ຖາມ____ ຖາມ ເພື່ອ ຝາກ - ຮັກ ຕໍ່ ກັນ... (Solo verse B)

Coda 𝄌

**E**

Ab Eb Ab Eb

Fine

(Coda) ________ repeat 'till Fade out...

# ກ່ອນຈະຮັກກັນ

Key : Ab　　ເນື້ອຮ້ອງ & ທຳນອງ : ສ. ແສງສິຣິວັນ
Soul Tango　　ນັກຮ້ອງຕົ້ນສະບັບ : ສ. ແສງສິຣິວັນ　　1973

1) ຄືນເຮົາກ່ອນຈະ　　ຮັກກັນ
ສິ່ງຄວາມສັມພັນ　　ທາງຕາ
ຮອຍຍິ້ມກໍປ່ອຍອອກມາ　　ຍິ້ມຢ່າງສັດທາ
ໃຊ້ແທນອາຈາ　　ທັກທາຍ

2) ຍາມໃດທີ່ເຫັນ　　ໜ້າກັນ
ຈິດໃຈຕື້ນຕັນ　　ແທບອາຍ
ຄວາມຮັກທີ່ຫຼົບຢູ່ໃນ　　ລຸກຂຶ້ນທັນໃດ
ໄຂປະຕູໃຈ　　ອອກມາ

• ຕາຕໍ່ຕາ　　ປະສານກັນ
ສຸດສະທ້ານໄປທົ່ວ　　ອຸຣາ
ຄວາມຮັກເອີ່ມກໍ່　　ຕໍ່ຈາກສາຍຕາ
ຄວາມປາຖນາ　　ລອຍຕາມ

3) ດວງໃຈເກັບຄວາມ　　ຮູ້ສຶກ
ສມອງກໍນຶກ　　ທາບທາມ
ອາຣົມເອີ່ມສັ່ນຈິດຫວາມ　　ເມື່ອຢາກຈະຖາມ
ຖາມເພື່ອຝາກຮັກ　　ຕໍ່ກັນ...

# ຜິດຫວັງ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຊານໄຊ

1970

Bolero (♩ = 70)

Cm Bb Ab Bb Fm Gm Cm

(Intro) ______ ຜິດ

A

1 Cm Bb Eb Fm Gm Cm Ab

ຫວັງ ແລ້ວ ເຈົ້າ ຈົ່ງ ຮູ້ ເມື່ອ ບອກ ບໍ່ ເຊື່ອ ແລ້ວ ເສືອ ເປັນ ຈັ່ງ ໃດ - ຈະ ທັນ

5 Eb Fm Gm Ab Fm Gm Bb G7

ໜ້າ ກັບ ໄປ ຫາ ຜູ້ ໃດ ເຂົາ ຄົງ ຈະ ບໍ່ ສົນ ໃຈ ແລ້ວ ໃຜ ຈະ ທໍ ຣະ ມາ...______ ຜິດ

B

9 Cm Bb Eb Fm Gm Cm Ab

ຫວັງ ແລ້ວ ມາ ນັ່ງ ຮ້ອງ ໄຫ້ ຈະ ໂທດ ໃຜ ໝາຍ ໃຜ ລິ້ງ ອາ ຍາ ເມື່ອ ຫຼີງ

13 Eb Fm Gm Ab Fm Gm Cm

ຜິດ ທາງ ຊີ ວິດ ບານ ມາ ເສັຽ ຄືອ ເສັຽ ທີ ເສັຽ ທ່າ ນ້ຳ ຕາ ເຈົ້າ ຕ້ອງ ຫຼັ່ງ ນອງ...______ ກັບ

C

17 Fm Gm Bb Cm

ໂຕ ກັບ ໃຈ ເສັຽ ໃໝ່ ກໍ ດີ______ ມາ ຊຸບ ຊີ ວີ ຢ່າ ໃຫ້ ມີ ອັບ ສີ ເສົ້າ ໝອງ______ ຮັກ ຄົນ ທີ່

21 Bb Fm Gm Bb G7

ເຂົາ ຮັກ ເຮົາ ຢ່າ ຫວັງ ເງິນ ທອງ ຫືອ ໃຈ ບໍ່ ແມ່ນ ສິ່ງ ຂອງ ຕໍ່ ຮອງ ຊື້ ໄດ້ ຂາຍ ກັນ...______ ຜິດ

D

25 Cm Bb Eb Fm Gm Cm Ab

ຫວັງ ແລ້ວ ມາ ຕັ້ງ ໂຕ ໃໝ່ ທີ່ ແລ້ວ ໄປ ນັ້ນ ໃຫ້ ເປັນ ຄວາມ ຝັນ ຊີ ວິດ

29 Eb Fm Gm Ab Fm Gm To Coda Cm 1.

ໃໝ່ ຄົງ ສົດ ໃສ ລາ ວັນ ຟ້າ ຄົງ ຈະ ລົງ ໂທດ ທັນ ສາ ບານ ທີ່ ເຂົາ ແກ້ງ ລືມ... (Solo verse C)

Coda

E

33 Cm 2. Cm Bb Ab Bb Fm Gm

ລືມ... (Coda) ______

37 Cm Gm Cm Cm9

Fine

# ຜິດຫວັງ

Key : Cm
Bolero

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໝໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຊານໄຊ

1970

1) ຜິດຫວັງ　　ແລ້ວເຈົ້າຈັ່ງຮູ້ເມື່ອ
ບອກບໍ່ເຊື່ອ　　ແລ້ວເສືອເປັນຈັ່ງໃດ
ຈະຫັນໜ້າ　　ກັບໄປຫາຜູ່ໃດ
ເຂົາຄົງຈະບໍ່ສົນໃຈ　　ແລ້ວໃຜຈະທໍຣະມາ

2) ຜິດຫວັງ　　ແລ້ວມານັ່ງຮ້ອງໄຫ້
ຈະໂທດໃຜ　　ໝາຍໃຜລົງອາຍາ
ເມື່ອຫຼົງຜິດ　　ທາງຊີວິດນານມາ
ເສັຽຕົວເສັຽທີເສັຽທ່າ　　ນ້ຳຕາເຈົ້າຕ້ອງຫຼັ່ງນອງ

• ກັບໂຕ　　ກັບໃຈເສັຽໃໝ່ກໍດີ
ມາຊຸບຊີວີ　　ຢ່າໃຫ້ມີອັບສີເສົ້າໝອງ
ຮັກຄົນທີ່ເຂົາ　　ຮັກເຮົາຢ່າຫວັງເງິນທອງ
ຫົວໃຈບໍ່ແມ່ນສິ່ງຂອງ　　ຕໍ່ຮອງຊື້ໄດ້ຂາຍກັນ

3) ຜິດຫວັງ　　ແລ້ວມາຕັ້ງໂຕໃໝ່
ທີ່ແລ້ວໄປ　　ນັ້ນໃຫ້ເປັນຄວາມຝັນ
ຊີວິດໃໝ່　　ຄົງສົດໃສລາວັນ
ຟ້າຄົງຈະລົງໂທດທັນ　　ສາບານທີ່ເຂົາແກ້ງລືມ...

# ງາມເຫຼືອເກີນ

ເນື້ອຮ້ອງ & ທຳນອງ : ຄຳຄືນ ເມືອງນະຄອນ
ນັກຮ້ອງຕົ້ນສະບັບ : ກ. ແກ້ວກ່ຳພ້າ

1968






























# ງາມເຫຼືອເກີນ

Key : F
Slow Bolero

ເນື້ອຮ້ອງ & ທຳນອງ : ຄຳຄືນ ເມືອງນະຄອນ
ນັກຮ້ອງຕົ້ນສະບັບ : ກ. ແກ້ວກ່ຳພ້າ

1968

1) ງາມ... ງາມເຫຼືອເກີນນ້ອງສາວ
ຂາວ... ຜິວຂາວຄືກັບສຳລີ
ໜ້າກໍຫວານ ຄິ້ວກໍກົ່ງຄືສະຣະອີ
ສຽງຫວານປານສອນຄີຣີ ໂອ້ຄືນດີໜ້າຮັກໜ້າຮັກ

2) ງາມ... ງາມເໝືອນເດືອນວັນເພັ່ນ
ເຫັນ... ໃຜເຫັນແລ້ວຢາກຮູ້ຈັກ
ຕາເຈົ້າຊູ້ ດູເປັນນິ່ງບາດໃຈຍິ່ງໜັກ
ໃຜເຫັນແລ້ວຕ້ອງຫຼົງມັກ ສມັກເປັນແຟນແກ້ວຕາ

• ຂໍຖາມ ຫົວໃຈຫວ່າງບໍ່ໜ້າມົນ
ນັກຮ້ອງຄືນຈົນ ທີ່ຊື່ ກ. ແກ້ວກ່ຳພ້າ
ຢາກຈະຮູ້ຈັກ ຢາກຈະຝາກຮັກນ້ອງຊື່ວຊົວາ
ຖ້າຫາກນ້ອງເມຕຕາ ຈະຄອຍຮ້ອງເພງກ່ອມນອນ

3) ງາມ... ງາມນ້ອງງາມບາດໃຈ
ທົນ... ບໍ່ໄຫວຫົວໃຈມັນອ່ອນ
ພຽງນ້ອງຍິ້ມ ຫົວໃຈອ້າຍມັນສັ່ນມັນຄອນ
ຢາກໄດ້ມາເປັນຄູ່ນອນ ໄຫວ້ວອນໃຫ້ນ້ອງເຫັນໃຈ...

# ດອກບົວທອງ

ເນື້ອຮ້ອງ & ທຳນອງ : Pierre ESPANET
ນັກຮ້ອງຕົ້ນສະບັບ : ອັນນະເຣດ ຣາຊະໂພ

~1945-46

Rumba Bolero (♩ = 94)

(Intro)

F Am Dm C E♭ C F B♭ C

**A**

ໂອ້ ດອກ ບົວ ທອງ ບານ ໃນ ໜອງ ນ້ຳ - ໃສ

ເກີດ ຫືອ ໃບ ໃບ ດົມ ແກມ ສ ນົມ ດົມ - ຫຍ້າ

ແຕ່ ເປັນ ດວງ ບຸບ ຜາ ທີ່ ສ ງ່າ ໜ້າ - ດູ

ເມື່ອ ຍາມ ເຊົ້າ ຕຣູ່ ໝູ່ ແມງ ສ ແວງ - ຕອມ ຫວັງ ດົມ ດອກ

ຫອມ ໃຫ້ ຣະ ບົມ ຣະ ບອມ... ບົວ ທອງ ຂອງ
ຖ້າ ໄດ້ ເດັດ

**B**

ໃຜ ຖ້າ ໄດ້ ເປັນ ເຈົ້າ - ຂອງ ຈະ ປະ ຄັບ ປະ
ດົມ ເຊີຍ ຊົມ ສົມ ຈິດ - ປອງ ຈະ ເອົາ ໃສ່ ພານ

ຄອງ ໃຫ້ ບົວ ທອງ ບານ - ຊື່ນ ຍິ່ງ ກວ່າ ຣິດ ອື່ນ
ທອງ ບໍ່ ໃຫ້ ໜອງ ທ່ຽວ - ແຫ້ງ ຖ້າ ແມງ ພູ່ ຕຣູ

ງ ໃນ ພື້ນ ໂລກ ເຮົາ - ນີ້ ຮັກ ພຽງ ຊິ
ຕອມ ຈະ ຖ ນອມ ທອມ - ເຈົ້າ ທຸກ ເຊົ້າ ວັນ

ອາ ປະດູດ ດວງ ຕາ - ເຮົາ ໂອ້ ເຈົ້າ ບົວ ຫຼອງ
ເຢັນ ໃຫ້ ເປັນ ຂວັນ - ໃຈ ໂອ້ ບົວ ບັງ ໃບ

**C**

To Coda 1.

ດວງ ມາ ລາ ໜ້າ ຊົມ...
ໜ້າ ຮັກ ໄຄ່ ເສັຽ...

**D**

Coda 2.

ຈິງ... ໂອ້ ບົວ ບັງ

ໃບ ໜ້າ ຮັກ ໄຄ່ ເສັຽ ຈິງ...

Fine

# ດອກບົວທອງ

Key : F
Rumba Bolero

ເນື້ອຮ້ອງ & ທຳນອງ : Pierre ESPANET
ນັກຮ້ອງຕົ້ນສະບັບ : ອັນນະເຣດ ຣາຊໂພ

~1945-46

1) ໂອ້ດອກບົວທອງ ບານໃນໜອງນ້ຳໃສ
ເກີດຫົວໃບໃນຕົມ ແກມສບົມຕົມຫຍ້າ
ແຕ່ເປັນດວງບຸບຜາ ທີ່ສງ່າໜ້າດູ
ເມື່ອຍາມເຊົ້າຕຣູ່ ໝູ່ແມງສແວງຕອມ
ຫວັງດົມດອກຫອມ ໃຫ້ຣະບົມຣະບອມ...

2) ບົວທອງຂອງໃຜ ຖ້າໄດ້ເປັນເຈົ້າຂອງ
ຈະປະຄັບປະຄອງ ໃຫ້ບົວທອງບານຊື່ນ
ຍິ່ງກວ່າຣົດອື່ນໆ ໃນພື້ນໂລກເຮົານີ້
ຮັກພຽງຊີວາ ປະດຸດດວງຕາເຮົາ
ໂອ້ເຈົ້າບົວຫຼວງ ດວງມາລາໜ້າຊົມ...

3) ຖ້າໄດ້ເດັດດົມ ເຊີຍຊົມສົມຈິດປອງ
ຈະເອົາໃສ່ພານທອງ ບໍ່ໃຫ້ໝອງຫ່ຽວແຫ້ງ
ຖ້າແມງພູ່ຕຣູຕອມ ຈະຖນອມທອມເຈົ້າ
ທຸກເຊົ້າອັນເຢັນ ໃຫ້ເປັນຂວັນໃຈ
ໂອ້ບົວບັງໃບ ໜ້າຮັກໄຄ່ເສັຽຈິງ...

# ໝົດທາງຮັກ

ເນື້ອຮ້ອງ & ທຳນອງ : ບົວບັງໃບ
ນັກຮ້ອງຕົ້ນສະບັບ : ບົວບັງໃບ

~1992-93






























# ໝົດທາງຮັກ

Key : A
Slow Waltz

ເນື້ອຮ້ອງ & ທຳນອງ : ບົວບັງໃບ
ນັກຮ້ອງຕົ້ນສະບັບ : ບົວບັງໃບ

1992-93

1) ຫາດຊາຍ ແສນງາມລັບໄປ
ຝັ່ງຊາຍ ຟື້ນຟອງຊັດມາ
ຝັ່ງຊາຍ ຕ້ອງລືມນະພາ
ເຄື່ອນມາ ໝຸນວຽນປ່ຽນຜັນ

2) ເໝືອນຊາຍ ບອກຮັກຊຶ້ງໃຈ
ທີ່ຊາຍ ເຄີຍໃຫ້ຮັກກັນ
ທີ່ຮັກ ຊ່າງມາລືງທັນ
ກັບທັນ ໝຸນວຽນປ່ຽນໄປ

• | ແສນທີ່ຫ່ວງ ດວງໃຈສຸດຊຶ້ງ
| ສຸດຄະນຶງ ເຖິງຮັກບໍ່ອາຍ
| ນ້ອງຍັງຮັກ ຮັກໝັ້ນຣືທັຍ
| ແຕ່ໃຈອ້າຍ ປ່ຽນເປັນຫຼາຍທາງ

3) ຄວາມຫວັງ ຈິ່ງພັງທະລາຍ
ຝັ່ງຊາຍ ຈິ່ງກາຍເປັນດ່າງ
ຝັ່ງຊາຍ ກໍໝົດຄວາມງາມ
ໝົດຫວັງ ຫົນທາງຮັກເຮົາ....

# ອີງອາຍຮັກ

ເນື້ອຮ້ອງ & ທຳນອງ : ບົວບັງໃບ
ນັກຮ້ອງຕົ້ນສະບັບ : ບົວບັງໃບ

~1992-93

































# ອິງອາຍຮັກ

Key : G
Slow Rock

ເນື້ອຮ້ອງ & ທຳນອງ : ບົວບັງໃບ
ນັກຮ້ອງຕົ້ນສະບັບ : ບົວບັງໃບ

1992-93

1) ລົມເຢັນໆ ພັດຜ່ານເຂົ້າມາ
ພັດອາຍກາຍຍາ ພຸ່ງມາເຖິງນ້ອງ
ຢອນໃຈອາຍຄົງ ຍ່າວມາເປັນກອງ
ຄິດຢາກຈະມອງ ເຈົ້າຂອງຈັກທີ

2) ແດດຮ້ອນໆ ພັດແຜ່ວເຂົ້າມາ
ພັດອາຍພາສາ ຮັກມາເຖິງນີ້
ຊອນໃຈອາຍຄົງ ສິງໃນຊອງດີ
ພຸ່ງພ່າວຢ່າວດີ ຫຼືງໄປໃຜ່ປອງ

• ເຢັນແລ້ວກໍຮ້ອນ ຮ້ອນແລ້ວກໍໜາວ
ໂອ້ອິກສາວໜໍ່ ຊ່າງງອາວອນ
ຮັກອາຍຄົງນັ້ນ ເໝືອນມຸ້ງໝອນ
ຈິນຈິດສະທ້ອນ ເຢັນຮ້ອນເຖິງຊອງ

3) ວັນແລະຄືນ ຄິດເຖິງອາຍມາ
ເຖິງອາຍມາຍາ ນ້ອງກໍຖາມຫອງ
ອິງອາຍແນບຊິດ ຈິດເປັນບ້າປ່ອງ
ອາຍຮັກອາຍຫອງ ຂໍຄອງອິງອາຍຮັກເອີຍ...

# ຈາກຖິ່ນ

ເນື້ອຮ້ອງ & ທຳນອງ : ບົວບັງໃບ
ນັກຮ້ອງຕົ້ນສະບັບ : ບົວບັງໃບ

~1992-93

Slow Waltz (♩ = 82)

Bm E G D Em G Bm
(Intro) ຈາກ

A
1 Bm E G D
ຖິ່ນ ທີ່ ເຄີຍ ຜູກ ພັນ ຈາກ ສ ວັນ ທີ່ ເຄີຍ ຜູກ ພັນ ຈາກ

5 Em G F♯7
ກັນ ທີ່ ເຄີຍ ຜູກ ພັນ ຈາກ ວັນ ທີ່ ເຄີຍ ຢ້ຽມ ເຢືອນ... ຈາກ

B
9 Bm E G D
ເພື່ອນ ທີ່ ເຄີຍ ຫ່ວງ ໃຍ ຈາກ ຊາຍ ທີ່ ເຄີຍ ຫ່ວງ ໃຍ ຈາກ

13 Em G F♯ Bm
ໃຈ ທີ່ ເຄີຍ ຫ່ວງ ໃຍ ຈາກ ໄປ ອາ ລັຍ ອາ ວອນ... ຮື... D.S.

C
17 Bm E G D
ຮື... ຮື... ຮື... ຮື... ຮື... ຮື... ຮື... ຮື... ຮື... ຮື... ຮື... ຮາ...

21 Em G F♯ Bm
ຮາ... ຮາ... ຮາ... ຮາ... ຮາ... ຮື... ຮື... ຮື... ຮື... ຮື... ຮື... ຈາກ

D
25 Bm E G D
ພໍ່ ກໍ ເໝືອນ ຂາດ ໃຈ ຈາກ ແມ່ ກໍ ເໝືອນ ຂາດ ໃຈ ພີ່

29 Em G To Coda 1. F♯ Bm (Solo verse A & B)
ນ້ອງ ກໍ ຄຶງ ຫ່ວງ ໃຍ ຈາກ ໄປ ອາ ລັຍ ອາ ວອນ...

Coda
E
33 2. G Bm G Bm
ໄປ ອາ ລັຍ ອາ ວອນ... (Coda)

37 G Bm Bm9
rall... ad lib... Fine

# ຈາກຖິ່ນ

Key : Bm
Slow Waltz

ເນື້ອຮ້ອງ & ທຳນອງ : ບົວບັງໃບ
ນັກຮ້ອງຕົ້ນສະບັບ : ບົວບັງໃບ

1992-93

1) ຈາກຖິ່ນ ທີ່ເຄີຍຜູກພັນ
ຈາກສວັນ ທີ່ເຄີຍຜູກພັນ
ຈາກກັນ ທີ່ເຄີຍຜູກພັນ
ຈາກວັນ ທີ່ເຄີຍຢ້ຽມເຢືອນ

2) ຈາກເພື່ອນ ທີ່ເຄີຍຫ່ວງໃຍ
ຈາກຊາຍ ທີ່ເຄີຍຫ່ວງໃຍ
ຈາກໃຈ ທີ່ເຄີຍຫ່ວງໃຍ
ຈາກໄປ ອາລັຍອາວອນ

• ຮື...ຮື... ຮື...ຮື...ຮື...
ຮາ...ຮາ ຮາ...ຮາ...ຮາ
ຮື...ຮື... ຮື...ຮື...ຮື...
ຮື...ຮື... ຮື...ຮື...ຮື...

3) ຈາກພໍ່ ກໍເໝືອນຂາດໃຈ
ຈາກແມ່ ກໍເໝືອນຂາດໃຈ
ພີ່ນ້ອງ ກໍຄິງຫ່ວງໃຍ
ຈາກໄປ ອາລັຍອາວອນ...

# ຢ່າອອດ

ເນື້ອຮ້ອງ & ທຳນອງ : ຄຳໃບ ຄຳຊະນະ
ນັກຮ້ອງຕົ້ນສະບັບ : ພິງສວັນ

~1970






























# ຢ່າອອດ

Key : Fm
Slow Bolero

ເນື້ອຮ້ອງ & ທຳນອງ : ຄຳໃບ ຄຳຊະນະ
ນັກຮ້ອງຕົ້ນສະບັບ : ພົງສວັນ

~1970

1) ຢ່າອອດຢ່າອິ່ງ ໄປເລີຍນ້ອງສາວ
ນ້ອງຢ່າຄິດຟ້າວ ຊອກຫາເອົາບ່າວຄຽງຄູ່ເດີນໂຊ
ອ້າຍບໍ່ໃສ່ໃຈ ເຖິງນ້ອງຈະໄດ້ຄູ່ຄອງອັກໂຂ
ນ້ອງສາວເຈົ້າຢ່າຄຸຍໂມ້ ອອດໂຕວ່າເດັ່ນວ່າດີ

2) ຢ່າອອດຢ່າອິ່ງ ໄປເລີຍອະນິງ
ຮູບງາມບໍ່ສິ່ງ ໃຫ້ນ້ອງເປັນຫົງຕລອດຊີວີ
ໜ້ອຍນຶ່ງກໍແກ່ ຊາດຊາຍຫຼຽວແລຢ່າມາອອດດີ
ເນື້ອໜັງຫ່ຽວແຫ້ງທຸກທີ ບໍ່ມີໃຜຈະຫົວຊາ

• ຕາຍໃຫ້ຕາຍ ກໍຕາຍແລ້ວເອີຍ
ອ້າຍນີ້ບໍ່ເຄີຍ ບໍ່ເຄີຍຄິດຝັນແກ້ວຕາ
ຜູ້ຍິງທັງເມືອງ ບໍ່ອຶດບໍ່ຢາກດອກໝາ
ຂໍນ້ອງເນື້ອທອງເຈົ້າຢ່າ ອອດທ່າເຫັນມີແຟນໃໝ່

3) ຢ່າອອດຢ່າອິ່ງ ໄປເລີຍການດາ
ເຈົ້າງາມໂສພາ ເໝືອນເທວະດາບິນຟ້າເມື່ອໃດ
ເຈົ້າອາດຜິດຫວັງ ຄືງມີອີກຄັ້ງເຈົ້າຈະເສັຽໃຈ
ເມື່ອເຂົາສິ້ນຄວາມອາລັຍ ຊານວັຍຈະສິ້ນໂສພາ...

# ສາມໝື່ນເມືອງເຟືອງ

ເນື້ອຮ້ອງ & ທຳນອງ : ສຸວັນ ສຸວັນນະຣາຊ
ນັກຮ້ອງຕົ້ນສະບັບ : ຊຳນານ ຈິ່ງຮັກ

Slow Bolero

(♩ = 61)

~1965




(Intro) ____________________ ເມືອງ ນີ້ງ

A




ນັ້ນ ເປັນເມືອງທີ່ ລື ກະ ເດື່ອງ ມີ ນາມ ສາມ ໝື່ນເມືອງ ເຟືອງ ລື ຈົນເຟື້ອງທົ່ວ ແດນ ອາ ນາ ເຖິງແມ່ນເປັນ




ເມືອງ ຢູ່ ຕາມຫວ່າງ ພູ ຮ່ອມ ຜາ ເຈົ້າ ຍັງ ສົດ ສວຍງາມ ຕາ ດັ່ງ ເທ ວາ ສ ວັນ ສັນ ສ້າງ... ສາມໝື່ນ

B




ນີ້ ເປັນແດນ ຝູງ ຊົນ ຝັນ ໃຝ່ ທົ່ວ ທັດ ກໍ ງາມ ຈັບ ໃຈ ວິ ໄລ ໄປ ທົ່ວ ທຸກ ທິດ ທາງ ຫາກ ໃຜ ໄດ້




ເຫັນ ບໍ່ ເວັ້ນ ທົ່ວ ໃຈ ເວັ້ນ ວາງ ອຸ ດົມ ສົມ ບູນ ທຸກ ຢ່າງ ຫາກເຢືອນ ຢັ້ງ ເຖິງ ແດນແຫ່ງ ນີ້... ສາມໝື່ນເມືອງ

C




ເຟືອງ ເຖິງ ບໍ່ ເຮືອງເໝືອນເມືອງ ອື່ນ ໆ ແຕ່ ກໍ ອຸ ດົມ ຊົມ ຊື່ນ ດ້ອຍ ຊັບ ສິນ ໃນ ດິນ ມາກ ມີ ຝູງ ຊົນ ປະ




ຊາ ວາ ຈາ ກໍ ຫວານ ເຫຼືອ ດີ ຖື ກັນ ເປັນ ມິດ ໄມ ຕຣີ ເມື່ອ ມີ ເມືອງ ອື່ນ ຢ້ຽມ ຢາມ... ສາມໝື່ນ

D




ນີ້ ເປັນເມືອງ ນັບ ວ່າ ເປັນ ນິ່ງ ພູ ຜາ ສູງ ຊັນ ຊາບ ຊຶ້ງ ສວຍ ສ ງ່າ ຣາ ວັນ ງົດ ງາມ ຜາ ຕັ້ງ ຜາ




ເລືອງ ເປັ່ງ ແສງ ເມື່ອ ຍາມ ຄ້ອຍ ຄ່ຳ ຜາ ທໍ່ ໝໍ່ ຄຳແສນ ງາມ ເປັນ ນິ່ງ ຂວັນປຣະ ດັບ ຂອງ ເມືອງ... (Solo verse B)

Coda

E




ເມືອງ... (Coda) ____________________






# ສາມໝື່ນເມືອງເຟືອງ

Key : B
Slow Bolero

ເນື້ອຮ້ອງ & ທຳນອງ : ສຸວັນ ສຸວັນນະທາຊ
ນັກຮ້ອງຕົ້ນສະບັບ : ຊຳນານ ຈິ່ງຮັກ

~1965

1) ເມືອງນີ່ງນັ້ນ ເປັນເມືອງທີ່ລຶກະເດື່ອງ
ມີນາມສາມໝື່ນເມືອງເຟືອງ ລືຈີນເຟື້ອງທົ່ວແດນອານາ
ເຖິງແມ່ນເປັນເມືອງ ຢູ່ຕາມຫວ່າງພູຮ່ອມຜາ
ເຈົ້າຍັງສຶດສວຍງາມຕາ ດັ່ງເທວາສວັນສັນສ້າງ

2) ສາມໝື່ນນີ້ ເປັນແດນຝູງຊົນຝັນໃຝ່
ທົວທັດກຳງາມຈັບໃຈ ວິໄລໄປທົ່ວທຸກທິດທາງ
ຫາກໃຜໄດ້ເຫັນ ບໍ່ເວັ້ນທົ່ວໃຈເວັ້ນວາງ
ອຸດົມສົມບູນທຸກຢ່າງ ຫາກເຢືອນຢັ້ງເຖິງແດນແຫ່ງນີ້

• ສາມໝື່ນເມືອງເຟືອງ ເຖິງບໍ່ເຮືອງເໝືອນເມືອງອື່ນໆ
ແຕ່ກໍອຸດົມຊົມຊື່ນ ດ້ວຍຊັບສິນໃນດິນມາກມີ
ຝູງຊົນປະຊາ ວາຈາກໍຫວານເຫຼືອດີ
ຖືກັນເປັນມິດໄມຕຣີ ເມື່ອມີເມືອງອື່ນຢ້ຽມຢາມ

3) ສາມໝື່ນນີ້ ເປັນເມືອງນັບວ່າເປັນນິ່ງ
ພູຜາສູງຊັນຊາບຊຶ້ງ ສວຍສງ່າຮາວັນງົດງາມ
ຜາຕັ້ງຜາເລືອງ ເປັ່ງແສງເມື່ອຍາມຄ້ອຍຄ່ຳ
ຜາທ່ໍໝໍ່ຄຳແສນງາມ ເປັນມິ່ງຂວັນປຣະດັບຂອງເມືອງ...

# ຄືນງາມໃຈແຫຼ້

ເນື້ອຮ້ອງ & ທຳນອງ : ຄຳຄືນ ເມືອງນະຄອນ & ສ. ບົວລະພັນ
ນັກຮ້ອງຕົ້ນສະບັບ : ກ. ແກ້ວກ່ຳຟ້າ

~1970

Slow Bolero (♩ = 64)

Bm G D Bm G A Bm D Bm
(Intro) ________________ ຄືນ ງາມ

**A**

1 Bm G D Em F♯m A Bm
ໆ ເປັນ ຫຍັງ ໃຈ ດຳ ໃຈ ແຫຼ້ ງາມ ຄັກ - ງາມ ແທ້ ໃຈ ເຈົ້າ ແຫຼ້ - ປານ ກາ ຮູບ ຮ່າງ ໜ້າ

5 G A Bm G Em A
ຮັກ ປາກ ກໍ ຄັກ ປານ ເພັຊ - ຣາ ບໍ່ ໜ້າ ບໍ່ ໜ້າ ບໍ່ ໜ້າ ເປັນ ຄືນ ໃຈ ດຳ... ຄືນ ຈົບ

**B**

9 Bm G D Em F♯m A Bm
ດີ ເປັນ ຫຍັງ ມັກ ມີ ຫຼາຍ ໃຈ ຫຼອກ ໄດ້ - ຫຼອກ ໄປ ອ້າຍ ຂໍ ຈື່ - ຂໍ ຈຳ ທ່ຽວ ເອົາ ຄວາມ

13 G A Bm G A D D7
ງາມ ຫຼອກ ຜູ້ ຊາຍ ໃຫ້ ເຈັບ ໃຫ້ ຊ້ຳ ຈະ ຈື່ ຈະ ຈຳ ຄືນ ງາມ ເຊື່ອ ໃຈ ບໍ່ ໄດ້... ໄປ ນຳ ຄືນ

**C**

17 G D C D Bm
ອື່ນ ອ້າຍ ແສບ ທີ່ ໃຈ ຈິ ຕາຍ ຕຳ ຕາ ຕຳ ໃຈ ສາ ບານ ອ້າຍ ວ່າ ຈັ່ງ ໃດ ເມື່ອ ຍາມ ຮັກ

21 G A D G A
ກັນ ບອກ ວ່າ ອ້າຍ ນີ້ ດີ ກວ່າ ໃຜ ໄດ້ ພໍ້ ຄືນ ໃໝ່ ຮັ່ງ ມີ ກໍ ລືມ ອ້າຍ ໄປ... ຄືນ ງາມ

**D**

25 Bm G D Em F♯m A Bm
ໆ ເປັນ ຫຍັງ ໃຈ ດຳ ໃຈ ແຫຼ້ ໃຈ ອ້າຍ - ເຈັບ ແທ້ ຍ້ອນ ເຊື່ອ ອີກ ເຊື່ອ ໃຈ ອ້າຍ ເປັນ ຄືນ

29 G A Bm A To Coda 1. D A
ຈົບ ໄປ ໃຫ້ ພົ້ນ ໄປ ມີ ແຟນ ໃໝ່ ຫຼີກ ທາງ ໃຫ້ - ໄກ ຕາມ ໃຈ ຄືນ ງາມ ໃຈ ແຫຼ້... (Solo verse B)

**E**

Coda

33 2. D D7 G A D G Gm D
ແຫຼ້... (Coda) ________________

Fine

# ຄືນງາມໃຈແຫຼ້

Key : Bm
Slow Bolero

ເນື້ອຮ້ອງ & ທຳນອງ : ຄຳຄີນ ເມືອງນະຄອນ & ສ. ບົວລະພັນ
ນັກຮ້ອງຕົ້ນສະບັບ : ກ. ແກ້ວກ່ຳພ້າ

~1970

1) ຄືນງາມໆ ເປັນຫຍັງໃຈດຳໃຈແຫຼ້
ງາມຄັກງາມແທ້ ໃຈເຈົ້າແຫຼ້ປານກາ
ຮູບຮ່າງໜ້າຮັກ ປາກກໍຄັກປານເພັຊຣາ
ບໍ່ໜ້າບໍ່ໜ້າ ບໍ່ໜ້າເປັນຄົນໃຈດຳ

2) ຄົນຈິບດີ ເປັນຫຍັງມັກມີຫຼາຍໃຈ
ຫຼອກໄດ້ຫຼອກໄປ ອ້າຍຂໍຈື່ຂໍຈຳ
ທ່ຽວເອົາຄວາມງາມ ຫຼອກຜູ້ຊາຍໃຫ້ເຈັບໃຫ້ຊ້ຳ
ຈະຈື່ຈະຈຳ ຄົນງາມເຊື່ອໃຈບໍ່ໄດ້

• ໄປນຳຄົນອື່ນ ອ້າຍແສບຫົວໃຈຈິຕາຍ
ຕຳຕາຕຳໃຈ ສາບານອ້າຍວ່າຈັ່ງໃດ
ເມື່ອຍາມຮັກກັນ ບອກວ່າອ້າຍນີ້ດີກວ່າໃຜ
ໄດ້ພໍ້ຄົນໃໝ່ ຮັ່ງມີກໍລືມອ້າຍໄປ

3) ຄືນງາມໆ ເປັນຫຍັງໃຈດຳໃຈແຫຼ້
ໃຈອ້າຍເຈັບແທ້ ຍ້ອນເຊື່ອອີກເຊື່ອໃຈ
ອ້າຍເປັນຄົນຈົນ ໄປໃຫ້ພົ້ນໄປມີແຟນໃໝ່
ຫຼີກທາງໃຫ້ໄກ ຕາມໃຈຄົນງາມໃຈແຫຼ້...

# ສາຍນ້ຳສາຍໃຈ

ເນື້ອຮ້ອງ & ທຳນອງ : ມະນັດ ລໍາລາມັຍ
ນັກຮ້ອງຕົ້ນສະບັບ : ຄໍາສອນ ພິມມະຈັນ

Slow Bolero
(♩ = 68)

~1970

E C♯m A F♯m B E C♯m E C♯m E

(Intro)

**A**

C♯m B C♯m A E A B G♯m C♯m
ສາຍ ນ້ຳ ຈະ ໄຫຼ - ນອງ ຄິດ ເຖິງ ນອນ ອະ ນິງ ທີ່ ສອງ ເຮົາ ເຄີຍ ຮ່ອນ ຮັກ ກັນ ສາຍໃຈ

F♯m G♯m C♯m A F♯m B G♯
ເອີຍ ເຈົ້າ ລືມ ຄໍາ ໝັ້ນ ປ່ຽນ ແປ ຜັນ ຮັກ ເຮົາ ເລີຍ ໝົ່ນ ໝອງ ໃຈ...

**B**

C♯m B C♯m A E A B G♯m C♯m
ສາຍ ນ້ຳ ບໍ່ ໄຫຼ - ຄືນ ໃຈ ອ້າຍ ແສນ ສະ ອື້ນ ສຸດ ໃຈ ຝືນ - ຕື່ນ ຮິ ທັຍ ໃຈ ເອີຍ

F♯m G♯m C♯m A F♯m B E G♯
ໃຈ ເຈົ້າ ມາ ລືມ ງ່າຍ ອ້າຍ ອາ ລັຍ ເຈົ້າ ໄກ ຫ່າງ - ກັນ ລືມ...

**C**

F♯m B G♯m C♯m B G♯
ສາຍ ນ້ຳ - ສາຍ - ໃຈ ເຈົ້າ ມີ ແຕ່ ໄຫຼ ແຝງ ກາຍ ຫຼົ້ນ

F♯ A G♯m C♯m F♯m B
ສິ້ນ - ຄວາມຮັກ ທີ່ - ມີ ສາຍ - ໃຈ ຄືນ ດີ - ສິ້ນ ຄວາມປຣາ ນີ ທີ່ ເຄີຍ ສຸກ ສັນ...

**D**

C♯m B C♯m A E A B G♯m C♯m
ສາຍ ນ້ຳ ຈະ ຫຼັ່ງ - ໄຫຼ ຈະ ໄກ ຫຼື ຈະ ໃກ້ ສຸດ ຈະ ໝາຍ ແຕ່ ຍາມ ຊິ່ງ ກັນ ຂ້າ ຂໍ

F♯m G♯m C♯m A To Coda
ອວນ ເທບ ໄທ້ ທຸກ ທ່ານ ໃຫ້ ເຮົາ

1. F♯m B E G♯
ນັ້ນ ຮັກ ກັນ ຊື່ວ - ຟ້າ ເອີຍ... (Solo verse B)

Coda ⊕

**E**

2. F♯m B E C♯m F♯m B E A Am E
ນັ້ນ ຮັກ ກັນ ຊື່ວ - ຟ້າ ເອີຍ... (Coda)

Fine

# ສາຍນ້ຳສາຍໃຈ

Key : E
Slow Bolero

ເນື້ອຮ້ອງ & ທຳນອງ : ມະນັດ ລຳລາມັຍ
ນັກຮ້ອງຕົ້ນສະບັບ : ຄຳສອນ ພິມມະຈັນ

~1970

1) ສາຍນ້ຳຈະໄຫຼນອງ ຄິດເຖິງນວນອະນິງ
ທີ່ສອງເຮົາ ເຄີຍຮ່ວມຮັກກັນ
ສາຍໃຈເອີຍ ເຈົ້າລືມຄຳໝັ້ນ
ປ່ຽນແປຜັນ ຮັກເຮົາເລີຍໝິ່ນໝອງໃຈ

2) ສາຍນ້ຳບໍ່ໄຫຼຄືນ ໃຈອ້າຍແສນສະອື້ນ
ສຸດໃຈຝືນ ຕື້ນຣືທັຍ
ໃຈເອີຍໃຈ ເຈົ້າມາລືມງ່າຍ
ອ້າຍອາລັຍ ເຈົ້າໄກຫ່າງກັນລືມ

• ສາຍນ້ຳ ສາຍໃຈ
ເຈົ້າມີແຕ່ໄຫຼ ແຝງກາຍຫຼົ້ນ
ສິ້ນຄວາມຮັກທີ່ມີ ສາຍໃຈຄືນດີ
ສິ້ນຄວາມປຣານີ ທີ່ເຄີຍສຸກສັນ

3) ສາຍນ້ຳຈະຫຼັ່ງໄຫຼ ຈະໄກຫຼືຈະໃກ້
ສຸດຈະໝາຍ ແຄ່ຍາມຊື່ງກັນ
ຂ້າຂໍວອນ ເທບໄທ້ທຸກທ່ານ
ໃຫ້ເຮົານັ້ນ ຮັກກັນຊື່ວຟ້າເອີຍ...

# ສາຍນ້ຳສາຍສະອື້ນ

ເນື້ອຮ້ອງ & ທຳນອງ : ມະນັດ ລຳລາມັຍ

ນັກຮ້ອງຕົ້ນສະບັບ : ສິນບູນ ລຳລາມັຍ

~1970

Slow Bolero (♩ = 68)

B G♯m E C♯m F♯ B G♯m B G♯m B

(Intro)

**A**

1 G♯m F♯ E B E F♯ D♯ G♯m

ສາຍ ນ້ຳ ຈະ ໄຫຼ - ນອງ ຮັກ ເຂົາ ແລ້ວ ຈິ່ງ ຕ້ອງ ເສົ້າ ໝົ່ນ ໝອງ - ນອງ ນ້ຳ ຕາ ໃຈເອີຍ

5 C♯m D♯m G♯m E C♯ F♯ D♯

ໃຈ ໃຜ ລືມ ສັນ ຍາ ບໍ່ ຄືນ ມາ ອຸ ຣາ ນ້ອງ ໝອງ - ໃຈ...

**B**

9 G♯m F♯ E B E F♯ D♯ G♯m

ສາຍ ນ້ຳ ບໍ່ ໄຫຼ - ຄືນ ໃຈ ນ້ອງ ແສນ ສະ ອື້ນ ສຸດ ໃຈ ຝືນ - ຕຣົມ ຣິ ທັຍ ໃຈຂອງ

13 C♯m D♯m G♯m E C♯m F♯ B

ເຮົາ ໃຜ ມາ ຢືມ ໄປ ຍາມ ຫຼັບ ໃຫຼ ຫືວ ໃຈ ປະ ອິງ ທຸກ ອັນ...

**C**

17 C♯m F♯ D♯m G♯m F♯ D♯

ສາຍ ນ້ຳ - ສາຍ - ໃຈ ມິ ໄດ້ ຫຼັ່ງ ໄຫຼ ເຊັ່ນ ກາຍ ໄປ ນັ້ນ

21 C♯ E D♯m G♯m C♯m F♯

ບໍ່ ຍອມ ຄືນ ເຫ - ຫັນ ເຂົາ - ສິ້ນ - ສັນ ພັນ - ແລ້ວ ມາ ຈາກ ໄປ ດັ່ງ ຝັນ ສ ລາຍ...

**D**

25 G♯m F♯ E B E F♯ D♯ G♯m

ສາຍ ນ້ຳ ຈະ ຫຼັ່ງ - ໄຫຼ ຈະ ໄກ ຫຼື ຈະ ໃກ້ ສຸດ ຈະ ໝາຍ ແຄ່ ຢັ້ງ ເຖິງ ໃຈ ນ້ອງ ຂໍ

29 C♯m D♯m G♯m E To Coda 1. C♯m F♯ B

ວອນ ເຖິງ ອິງ ເທບ ທ່ານ ຫາກ ສິ້ນ ກັນ ຂໍ ຕາຍ ຢູ່ ໜ້າ ສຸ ສານ... (Solo verse B)

**E**

Coda 33 2. C♯m F♯ B G♯m C♯m F♯ B E Em B

ກັນ ຂໍ ຕາຍ ຢູ່ ໜ້າ ສຸ ສານ... (Coda)

Fine

# ສາຍນ້ຳສາຍສະອື້ນ

Key : B
Slow Bolero

ເນື້ອຮ້ອງ & ທຳນອງ : ມະນັດ ລຳລານັຍ
ນັກຮ້ອງຕົ້ນສະບັບ : ສົມບູນ ລຳລານັຍ

~1970

1) ສາຍນ້ຳຈະໄຫຼນອງ ຮັກເຂົາແລ້ວຈິ່ງຕ້ອງ
ເສົ້າໝົ່ນໝອງ ນອງນ້ຳຕາ
ໃຈເອີຍໃຈ ໃຜລືມສັນຍາ
ບໍ່ຄືນມາ ອຸຣານ້ອງໝອງໃຈ

2) ສາຍນ້ຳບໍ່ໄຫຼຄືນ ໃຈນ້ອງແສນສະອື້ນ
ສຸດໃຈຝືນ ຕຣົມຣືທັຍ
ໃຈຂອງເຮົາ ໃຜມາຢືມໄປ
ຍາມຫຼັບໃຫຼ ຫົວໃຈປະວິງທຸກວັນ

• ສາຍນ້ຳ ສາຍໃຈ
ມີໄດ້ຫຼັ່ງໄຫຼ ເຊັ່ນກາຍໄປນັ້ນ
ບໍ່ຍອມຄືນເຫຫັນ ເຂົາສິ້ນສັມພັນ
ແລ້ວມາຈາກໄປ ດັ່ງຝັນສລາຍ

3) ສາຍນ້ຳຈະຫຼັ່ງໄຫຼ ຈະໄກຫຼືຈະໃກ້
ສຸດຈະໝາຍ ແຕ່ຢັ່ງເຖິງໃຈ
ນ້ອງຂໍວອນ ເຖິງອິງເທບທ່ານ
ຫາກສິ້ນກັນ ຂໍຕາຍຢູ່ໜ້າສຸສານ...

# ຕິອ້າຍບ່ອນໃດ

ເນື້ອຮ້ອງ & ທຳນອງ : ຄຳຕຸ່ນ ວົງສນິດ
ນັກຮ້ອງຕົ້ນສະບັບ : ຄຳຕຸ່ນ ວົງສນິດ

~1970

Lamvong Saravanh

(♩ = 120)

































# ຕີອ້າຍບ່ອນໃດ

Key : Dm
Lamvong Saravanh

ເນື້ອຮ້ອງ & ທຳນອງ : ຄຳຕຸ່ນ ວົງສນິດ
ນັກຮ້ອງຕົ້ນສະບັບ : ຄຳຕຸ່ນ ວົງສນິດ

~1970

(ສອຍ) ຕີບ່ອນໃດເຈົ້າຕີອ້າຍບ່ອນໃດ ຕີບ່ອນໃດເຈົ້າຕີອ້າຍບ່ອນໃດ

1) ຕີອ້າຍຈ່ອຍ ຊັ້ນບໍລະຄືນດີ
ຕີອ້າຍບໍ່ພີ ແຄ່ງຂາບໍ່ໃຫຍ່
ຕີຜູ່ນ້ອຍ ຮວ້າຍ! ປາຊິວກະຍັງໄຂ່
ຊັ້ນຕີບ່ອນໃດ ເຈົ້າຕີອ້າຍບ່ອນໃດ...

2) ຫຼືວ່າ ເຈົ້າຕັ້ງກຽດຊັງ
ຄິດຢາກຫາທາງ ໄປມີຮັກໃໝ່
ຈຶ່ງຫາເອື່ອງນີ້ ເອື່ອງນັ້ນມາໃສ່
ຊັ້ນຍອດດວງໃຈ ເຈົ້າຕີອ້າຍບ່ອນໃດ...

(ສອຍ)

3) ຕີອ້າຍຈົນ ຊັ້ນບໍລະຄືນດີ
ຕີອ້າຍບໍ່ມີ ຖານະຍິ່ງໃຫຍ່
ຕີຂີ້ຮ້າຍ ຮວ້າຍ! ໃຜວ່າຫຼໍ່ໃດ
ຊັ້ນຕີບ່ອນໃດ ເຈົ້າຕີອ້າຍບ່ອນໃດ...

4) ຫຼືວ່າ ເຈົ້າໄດ້ໃໝ່ດີ
ທີ່ສົມກຽດສັກສີ ເຈົ້າແລ້ວແກ້ວໃຈ
ນ້ອງຈຶ່ງບໍ່ເອົ້າ ບໍ່ລືມອ້າຍໄດ້
ຊັ້ນຍອດດວງໃຈ ເຈົ້າຕີອ້າຍບ່ອນໃດ...

(ສອຍ)

(ເອົ້າ) ເຮີງ! ຕີບ່ອນໃດນໍນ້ອງນໍ້
ຕີວ່າຫົວອ້າຍຫຍອງຊັ້ນບໍ ໄກ່ຍອງແມ່ນ້ອງກະຍັງລ້ຽງ
ຫຼືວ່າຕີວ່າຫົວອ້າຍລ້ານ ລານນ້ອງກະຍັງແປນ
ຕີວ່າອ້າຍຂີ້ຈ່ອຍຊັ້ນບໍ ເຮີງ!
ອ້າຍຕັ້ງຄືນກະດູກຫຼາຍຊື່ງດອກເອີ້ຍ ເຮີງ!

# ຄັກເຈົ້າລະບໍ່

ເນື້ອຮ້ອງ & ທຳນອງ : ຄຳຕຸ່ນ ວົງສນິດ
ນັກຮ້ອງຕົ້ນສະບັບ : ຄຳຕຸ່ນ ວົງສນິດ

Lamvong Saravanh
(♩ = 120)

~1970

Dm F Dm Gm C Dm

(Intro) ________ ຄັກ ເຈົ້າລະ

1 Dm Bb Dm

ບໍ່ ສົມ ໃຈ - ເຈົ້າ ລະ ບໍ່ ຄັກ ເຈົ້າ ລະ ບໍ່ ສົມ ໃຈ - ເຈົ້າ ລະ ບໍ່ ແງັດ! ໆ! ຜິດ ຜິດ ບອກ ຮັກ

**A**

5 F Dm F Gm

ຫວັງ ແລ້ວ ມາ ນັ່ງ - ຮ້ອງ - ໄຫ້____ ແມ່ນ ຜູ້ ໃດ ບອກ ເຈົ້າ - ຫຼາຍ -

8 F Dm Gm C Dm

ໃຈ ຜິດ ຫວັງ - ໄປ ມັນ ຄັກ ໃຈ - ເຈົ້າ ບໍ່ ນາງ... ຄັກ ເຈົ້າ ລະ...

**B**

11 Dm F Gm

ຫວັງ ແລ້ວ ມາ ນັ່ງ - ຄອນ - ຄາງ ບອກ ໃຫ້ ນາງ ຢ່າ ຈັບ ປາ - ຫຼາຍ -

14 F Dm Gm C Dm

ທາງ ຜິດ ພາດ ພັ້ງ - ແລ້ວ - ມາ ນັ່ງ - ໝ້າ - ງໍ... ຄັກ ເຈົ້າ ລະ...

**C**

17 F Dm Bb Gm F Dm

ແລ້ວ - ຕັ້ງ ຫຼາຍ - ໆ ຄັ້ງ____ ບອກ ໃຫ້ - ນາງ ຮັກ ດຽວ - ກະ ພໍ ຮັກ ກັບ ອ້າຍ

21 F Gm C Dm

ປານ ນີ້ ຄືງ ໄດ້ - ຮ່ວມ ຫໍ____ ເຈົ້າ ກະ ຍັງ ບໍ່ ພໍ____ ດັນ ຮັກ ອື່ນ ໝື່ນ ແສນ... ຄັກ ເຈົ້າ ລະ...

**D**

25 Dm F Dm Gm

ອ້າຍ ນັ້ນ ມັນ ດີ ສຸດ ແສນ____ ບໍ່ ມີ ແຄນ____ ຮັບ ຮອງ ບໍ່

28 F Dm Gm C Dm

ແຄ້ນ ເສືອກ ມີ ແຟນ ມັນ ຄັກ ໃຈ - ເຈົ້າ ລະ ບໍ່... ຄັກ ເຈົ້າ ລະ...

Coda

**E**

31 Dm Bb Dm

ບໍ່ ສົມ ໃຈ - ເຈົ້າລະ ບໍ່ ຄັກ ເຈົ້າລະ... ບໍ່ ສົມ ໃຈ - ເຈົ້າລະ ບໍ່ ຄັກ ເຈົ້າລະ ບໍ່ ສົມ ໃຈ - ເຈົ້າລະ ບໍ່ ແງັດ! ໆ!

Fine

# ຄັກເຈົ້າລະບໍ່

Key : Dm
Lamvong Saravanh

ເນື້ອຮ້ອງ & ທຳນອງ : ຄຳຕຸ່ນ ວົງສນິດ
ນັກຮ້ອງຕົ້ນສະບັບ : ຄຳຕຸ່ນ ວົງສນິດ

~1970

(ສອຍ) | ຄັກເຈົ້າລະບໍ່ ສິນໃຈເຈົ້າລະບໍ່
ຄັກເຈົ້າລະບໍ່ ສິນໃຈເຈົ້າລະບໍ່ ແງ້ດໆ

1) ຜິດຫວັງແລ້ວ ມານັ່ງຮ້ອງໄຫ້
ແມ່ນຜູ້ໃດ ບອກເຈົ້າຫຼາຍໃຈ
ຜິດຫວັງໄປ ມັນຄັກໃຈເຈົ້າບໍ່ນາງ...

(ສອຍ)

2) ຜິດຫວັງແລ້ວ ມານັ່ງຄອນຄາງ
ບອກໃຫ້ນາງ ຢ່າຈັບປາຫຼາຍທາງ
ຜິດພາດພັ້ງ ແລ້ວມານັ່ງໜ້າງໍ...

(ສອຍ)

3) ບອກແລ້ວ ຕັ້ງຫຼາຍໆຄັ້ງ
ບອກໃຫ້ນາງ ຮັກດຽວກະພໍ
ຮັກກັບອ້າຍ ປານນີ້ຄືງໄດ້ຮ່ອມຫໍ
ເຈົ້າກະຍັງບໍ່ພໍ ດັນຮັກອື່ນໝື່ນແສນ...

(ສອຍ)

4) ຮັກອ້າຍນັ້ນ ມັນດີສຸດແສນ
ບໍ່ມີແຄນ ຮັບຮອງບໍ່ແຄ້ນ
ເສືອກມີແຟນ ມັນຄັກໃຈເຈົ້າລະບໍ່...

(ສອຍ)

(ເວົ້າ) | ເຮີງ! ເປັນຈັ່ງໃດລະຍານ້ອງ
ຢາກຫຼາຍໃຈລະອາກລາກບໍ່ລະ ເຮີງ!

# ສັຕຣີສມັຍ

ເນື້ອຮ້ອງ & ທຳນອງ : ມ. ເມືອງໃຕ້

ນັກຮ້ອງຕົ້ນສະບັບ : ມ. ເມືອງໃຕ້

1968

Lamvong LAO (♩ = 108)

E F♯m C♯m E F♯m B E

(Intro) ______ ພໍ ເຊືອບ

A

E F♯m C♯m E F♯m B

ແລ ຟາດ ສາຍ ຕາ ໄປ ຍັງ ສາມ ລໍ້ ໂອ້ ໂຫ ລະ ອໍ ສາວ ນັ່ງ ຊູ ຄໍ ມາ ຢ່າງເສີດ ສາຍ ບໍ່ ຮູ້ ພາ

C♯m A G♯m F♯m C♯m

ສາເພາະຍັງ ບໍ່ ໄດ້ - ທັກທາຍ ຈັກແມ່ນຝ ຮັ່ງ ຫຼື ໄທ - ຫຼື ລາວ ກໍ ບໍ່ ຊ່າງ ຊິ ວ່າ... ເມື່ອ ເຫຼືອບ

B

E F♯m C♯m A B

ແລ ຟາດ ສາຍ ຕາ ຕໍ່າ ລົງ ເລັກ ນ້ອຍ ໂຫ້ເອີຍໃຈ ຂ້ອຍ ເປັນ ຫຍັງ ມັນ ເຕັ້ນເກືອບ ຫຼຸດ ອອກ ມາ ນັ່ງທ່າສະ

C♯m A E B C♯m

ບາຍເຫຼືອເກີນ ບໍ່ ຫ່ວງ ແຄ່ງຂາ ຂາ ຂາວ ໆ ຈັ່ງແມ່ນຕາ - ນີ້ ປານທຶງ ກາ ເບິ່ງ ຂານ້ອງ ນາງ... ພວກ ສັຕ

C

E C♯m A F♯m B

ຣີ ສ ມັຍ ນີ້ ກຳ ລັງ ເລີງ ຫຼີ້ນ ທັງຫຼາຍນຸ່ງ ສັ້ນ ແຕ່ ບາງ ຄືນ - ປິ້ນ ປ່ຽນແນວ ທາງ ບໍ່ ວ່າ ຂຶ້ນ

C♯m A F♯m B C♯m

To Coda 1.

ສາວ - ຫຼື ວ່າ ແກ່ ເກືອບ ຈະ ໄດ້ ຝັງ - ບໍ່ ຮ່ຳເພິງ ອີ່ ຫຍັງ - ບໍ່ ປິດ ບໍ່ ບັງ ກັນເລີຍແມ່ ນາງ... (Solo verse B)

(ເອົ້າ) ໂອ້ຍ! ມັນກະໂພດອີ່ຫຼີ ອັນຍາໝ່ອມເອີຍ

ອັນນັ່ງສາມລໍ້ຫັ້ນໝາ ເປັນອີ່ສັງບໍ່ລະວັງແຄ່ງລະວັງຂາ

ມັນເຫັນຈັ່ງຊີ້ມັນໂລດລະລາຍໃຈ ອຸກແທ້ໃດ ອັນຍາໝ່ອມເອີຍ...

Coda

D

C♯m E F♯m C♯m F♯m B

2.

ນາງ... (Coda) ______

C♯m F♯m B C♯m C♯m9

______ rall... ______

Fine

# ສັຕຣີສມັຍ

Key : C#m
Lamvong LAO

ເນື້ອຮ້ອງ & ທຳນອງ : ມ. ເມືອງໃຕ້
ນັກຮ້ອງຕົ້ນສະບັບ : ມ. ເມືອງໃຕ້

1968

1) ພໍເຊືອບແລ ຟາດສາຍຕາໄປຍັງສາມລໍ້
ໂອ້ໂຫລະອໍ ສາວນັ່ງຊູຄໍມາຢ່າງເສີດສາຍ
ບໍ່ຮູ້ພາສາ ເພາະຍັງບໍ່ໄດ້ທັກທາຍ
ຈັກແມ່ນຝຣັ່ງຫຼືໄທ ຫຼືລາວກໍບໍ່ຊ່າງຊິວ່າ

2) ເມື່ອເຫຼືອບແລ ຟາດສາຍຕາຕ່ຳລົງເລັກນ້ອຍ
ໂຫ້ເອີຍໃຈຂ້ອຍ ເປັນຫຍັງມັນເຕັ້ນເກືອບຫຼຸດອອກມາ
ນັ່ງທ່າສະບາຍ ເຫຼືອເກີນບໍ່ຫ່ອງແຄ່ງຂາ
ຂາຂາວງຈັ່ງແມ່ນຕາ ນີ້ປານຫົງກາເບິ່ງຂານ້ອງນາງ

• ພວກສັຕຣີ ສມັຍນີ້ກຳລັງເລີງຫຼິ້ນ
ທັງຫຼາຍນຸ່ງສິ້ນ ແຕ່ບາງຄົນປີ້ນປ່ຽນແນວທາງ
ບໍ່ວ່າຂີ້ນສາວ ຫຼືວ່າແກ່ເກືອບຈະໄດ້ຝັງ
ບໍ່ຮ່ຳເພິງອີ່ຫຍັງ ບໍ່ປິດບໍ່ບັງກັນເລີຍແມ່ນາງ...

(ເວົ້າ) ໂອ້ຍ! ມັນກະໂພດອີ່ຫຼີ ອັນຍາໝ່ອມເອີຍ
ອັນນັ່ງສາມລໍ້ຫັ້ນໝາ ເປັນອີ່ສັງບໍ່ລະວັງແຄ່ງລະວັງຂາ
ມັນເຫັນຈັ່ງຊີ້ມັນໂລດລະລາຍໃຈ ອຸກແທ້ໃດອັນຍາໝ່ອມເອີຍ...

# ລືມເສັຽເຖີດ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1983

Slow Rock (♩ = 68)

Eb Cm Fm Bb Fm Bb

Intro ______________________________

**A**

Eb Eb G Ab Eb Eb7

ຈົ່ງ ລືມ ເສັຽ ທີ່ ວ່າ ມີ ອ້າຍ ຢູ່ ໂປຣດ ເຖີດ ຍອດ ຊູ້ ໂປຣດ ຈົ່ງ ຈຳ ໃຈ

Ab Abm Gm Cm Fm F

ຈົ່ງ ຕັດຄວາມ ຮັກ ໃຫ້ ຫ່າງ___ ຂີດ ຊື່ ຂອງອ້າຍ ຈາກ ໃຈ___ ຢ່າ ຫ່ວງ ອາ ລັຍ ຫ່ວງ ໃຍ ສັນ ພັນ...

**B**

Bb7aug Eb G Ab Eb Eb7

ເມື່ອ ເຮົາ ສອງ ຄືນ ຝັນ ຄືນ ລະ ຢ່າງ ກໍ ສຸດ ໃຈ ຫວັງ ຕ້ອງ ຫ່າງ ໄກ ກັນ

Ab Abm Gm Cm Bb Eb Ab

ຢູ່ ໄປ ຄົງ ຊ້ຳ ຣະ ທົມ___ ຂື່ນ ຂົມ ຈົນ ຊື່ອ ຊີ ວັນ___ ຈະ ທຳ ຣະ ມານ ຫືວ ໃຈ ໄຮ້ ຄ່າ

**C**

Eb Abm Eb Gm

ແຕ່ ຈົ່ງ ຟັງ ສຽງ ຂອງ ອ້າຍ ນີ້ ກ່ອນ ກ່ອນ ຈະ ຈາກ ຈອນ ພາກ ໄກ ຫາຍ ໜ້າ

Cm Fm F Bb

ໂປຣດ ຈົ່ງ ມອງ ອ້າຍ ດ້ອຍ ແອວ ເນດ ຕາ ເຖີງ ຈະ ຈາກ ລາ ກໍ ຈົ່ງ ດ້ອຍ ດູ

**D**

Bb7aug Eb G Ab Eb Eb7

ຫາກ ມີ ເມື່ອ ໃດ ຫືວ ໃຈ ກົງ ກັນ ຫາກ ເທບ ສ ວັນ ທ່ານ ໂປຣດ ປຣາ ນີ

Ab Abm Gm Cm Bb Eb Ab

To Coda

1.

ຈົ່ງ ຄ່ອຍ ມາ ຮັກ ກັນ ໃໝ່___ ຮ່ວມ ໃຈ ຮ່ວມ ກັນ ຝັນ ດີ___ ຊື່ອ ນາ ຕາ ປີ ຊີບ ນີ້ ມະ ລາຍ... (Solo verse C)

**E**

Coda

Eb Ab Bb Eb Gm Fm Bb Eb

2.

ລາຍ... Coda ______________________________ (Repeat 4 times) _____

Fine

# ລືມເສັຽເຖີດ

Key : Eb
Slow Rock

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1983

1) ຈົ່ງລືມເສັຽທີ ວ່າມີອ້າຍຢູ່
ໂປຣດເຖີດຍອດຊູ້ ໂປຣດຈົ່ງຈຳໃຈ
ຈົ່ງຕັດຄວາມຮັກໃຫ້ຫ່າງ ຂີດຊື່ຂອງອ້າຍຈາກໃຈ
ຢ່າຫ່ວງອາລັຍ ຫ່ວງໃຍສັມພັນ

2) ເມື່ອເຮົາສອງຄົນ ຝັນຄົນລະຢ່າງ
ກໍສຸດໃຈຫວັງ ຕ້ອງຫ່າງໄກກັນ
ຢູ່ໄປຄົງຊ້ຳຣະທົມ ຂື່ນຂົມຈົນຊົ່ວຊີວັນ
ຈະທໍຣະມານ ຫົວໃຈໄຮ້ຄ່າ

• ແຕ່ຈົ່ງຟັງສຽງ ຂອງອ້າຍນີ້ກ່ອນ
ກ່ອນຈະຈາກຈອນ ພາກໄກຫາຍໜ້າ
ໂປຣດຈົ່ງມອງອ້າຍ ດ້ອຍແວວເນດຕາ
ເຖິງຈະຈາກລາ ກໍຈົ່ງດ້ອຍດີ

3) ຫາກມີເມື່ອໃດ ຫົວໃຈກົງກັນ
ຫາກເທບສວັນ ທ່ານໂປຣດປຣານີ
ຈົ່ງຄ່ອຍມາຮັກກັນໃໝ່ ຮ່ວມໃຈຮ່ວມກັນຝັນດີ
ຊົ່ວນາຕາປີ ຊີບນີ້ມະລາຍ...

# ດອນຈັນແມ່ຂອງ

ເນື້ອຮ້ອງ & ທຳນອງ : ສ.ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

<1975

Slow (♩ = 62)

F♯ G♯m B G♯m A♯m C♯ F♯ F♯dim G♯m7

(Intro)

**A**

F♯ G♯m D♯m B F♯ A♯m D♯m

1 ແສນ - ງາມ ເຫຼືອ ເມື່ອ ໄດ້ ມາ ເຫັນ___ ຫາດ ຊາຍ ຍາມ ເຢັນ ຕາມ ລຳ ແມ່ ຂອງ -

F♯ G♯m B C♯ F♯ D♯7 G♯7 C♯7

5 ງາມ ນ້ຳ ຟອງ ນ້ຳ ຂອງ ສອງ ຝັ່ງ ຍາມ ເມື່ອ ສອງ ເຮົາ ນັ່ງ ຢູ່ ຣິມ ຝັ່ງ ຫາດ ຊາຍ...

**B**

F♯ G♯m D♯m B F♯ A♯m D♯m

9 ແສງ - ຕະ ວັນ ຈະ ລັບ ລາ ໄປ___ ຫຼຽວ ມາ ແຕ່ ໄກ ງາມ ຫາດ ດອນ ຈັນ

F♯ G♯m B D♯m F♯ C♯ F♯ D♯7

13 ດັ່ງ ສ ວັນ ໄດ້ ມາ ສ້າງ ໄວ້ ໝຸ່ນ ບ່າວສາວ ຕິດ ໃຈ ຊອນ ກັນ ໄປ ເຫຼັ້ນ ທຸກ ເວ ລາ...

**C**

G♯m C♯ D♯m F♯

17 ງາມ ເຮືອ ນ້ອຍ - ເຮືອ ໄວ ຊິ່ງແລ່ນໄລ່ ໄຕ່ ຕາມ ໜ້າ ນ້ຳ ງາມ ຕາ___ ເຮືອ ນ້ອຍ ແລ່ນ

Gdim G♯m A♯m F♯ G♯m E C♯7

21 ໄປ ເຮືອ ໄວ ແລ່ນ ມາ - ສ ນຸກ ໃຈ ຈິງ ໜາ ພາ ໃຫ້ ຊື່ນ ຊົ ວິ...

**D**

F♯ G♯m D♯m B F♯ A♯m D♯m

25 ແມ່ - ນ້ຳ ຂອງ ແລະ ຫາດ ດອນ ຈັນ___ ເກີດ ມາ ຄູ່ ກັນ ໝາຍ ໝັ້ນ ຊົ ວິ

F♯ G♯m B D♯m F♯ C♯7 F♯ C♯7

To Coda 1.

29 ສວຍ ງາມ ດີ ດ້ອຍ ທັນ ມະ ຊາດ ສີ ສົດ ໃສ ສ ອາດ ທັນ ມະ ຊາດ ສ້າງ ໄວ້ ໃຫ້ ຊົມ... (Solo verse B)

Coda

**E**

F♯ C♯7 F♯

2. (♩ = 60) (♩ = 56) (♩ = 52)

33 ...ອາດ ທັນ ມະ ຊາດ ສ້າງ ໄວ້___ ໃຫ້ ຊົມ... (Out)___

rall...

Fine

# ດອນຈັນແມ່ຂອງ

Key : F#
Slow

ເນື້ອຮ້ອງ & ທຳນອງ : ສ.ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

<1975

1) ແສນ... ງາມເຫຼືອ ເມື່ອໄດ້ມາເຫັນ
ຫາດຊາຍຍາມເຢັນ ຕາມລຳແມ່ຂອງ
ງາມ... ນ້ຳຟອງ ນ້ຳຂອງສອງຝັ່ງ
ຍາມເມື່ອສອງເຮົານັ່ງ ຢູ່ຮິມຝັ່ງຫາດຊາຍ

2) ແສງ... ຕະວັນ ຈະລັບລາໄປ
ຫຼຽວມາແຕ່ໄກ ງາມຫາດດອນຈັນ
ດັ່ງ... ສວັນ ໄດ້ມາສ້າງໄວ້
ໝູ່ມບ່າວສາວຕິດໃຈ ຊວນກັນໄປເຫຼີ້ນທຸກເວລາ

• ງາມ... ເຮືອນ້ອຍ ເຮືອໄວ
ຊິ່ງແລ່ນໄລ່ໄຕ່ຕາມ ໜ້ານ້ຳງາມຕາ
ເຮືອນ້ອຍແລ່ນໄປ ເຮືອໄວແລ່ນມາ
ສນຸກໃຈຈິງໜາ ພາໃຫ້ຊື່ນຊີວີ

3) ແມ່... ນ້ຳຂອງ ແລະຫາດດອນຈັນ
ເກີດມາຄູ່ກັນ ໝາຍໝັ້ນຊີວີ
ສວຍ... ງາມດີ ດ້ວຍທັມມະຊາດ
ສີສົດໃສສວາດ ທັມມະຊາດສ້າງໄວ້ໃຫ້ຊົມ...

# ເໝືອນຄົນໄຮ້ຄ່າ

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ສົມຟອງ ຊິງມີໄຊ

1965






























# ເໝືອນຄົນໄຮ້ຄ່າ

Key : Am
Slow

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ສົມພອງ ຊົງມີໄຊ

1965

1) ຄວາມຮັກຂ້າສລາຍ ຄວາມຫວັງກໍສູນໄປ
ຫົວໃຈຂ້າ ສຸດໝົ່ນໝອງ
ຢາດນໍ້າຕາ ໄຫຼນອງ
ສິ້ນຄູ່ຄອງ ເໝືອນຄົນໄຮ້ຄ່າ

2) ຄົນຮັກທີ່ເຄີຍຫວງ ຊາຍທີ່ຂ້າເຄີຍຫ່ວງ
ກໍລ່ວງລັບ ດັບຊີວາ
ສູ້ຮັບກັນ ເລື້ອຍມາ
ໂອ້ດິນຟ້າ ຂ້າຢາກຈະຕາຍ

• ຢາກໃຫ້ ວິນຍານຂອງຂ້າ
ໄປຄູ່ຄຽງວິນຍາ ຂອງພໍ່ຍອດຊາຍ
ເຢີຍຂ້າຢູ່ ຢ່າງໝົດຄວາມໝາຍ
ຢູ່ໄປກໍອາຍ ຊາຍໃດກໍບໍ່ຕ້ອງການ

3) ຄົນໄຮ້ຄ່າຢ່າງນີ້ ຈົນກໍຈົນເຫຼືອດີ
ຫາມີໃຜ ຈະສົງສານ
ສຸດແສນ ທໍຣະມານ
ໂອ້ສວັນ ຂໍຈິ່ງເມດຕາ...

# ຄ້ອງນິ່ງໃນອະດີດ

ເນື້ອຮ້ອງ & ທຳນອງ : ຄຳໃບ ຄຳຊະນະ
ນັກຮ້ອງຕົ້ນສະບັບ : ຈັນທິ ສິຣິພອນ

~1965

Slow Bolero (♩ = 65)

Gm Bb Eb F Bb F Gm

(Intro) ____ ຄວາມ

A

1 Gm F Gm F Bb Cm F

ຫຼັງ ນັ້ນ ຫຼື ນ້ອງ ຈະ ລືມ ໄດ້ ມັນ ຝັງ ແນບ ຕິດ ດວງ ໃຈ ນ້ອງ ລືມ ບໍ່ ໄດ້ - ເລີຍ ໝາ ມັນ ປຽບ ເຂັມ

5 Dm Eb Bb Gm Cm D7

ເພັດ ທີ່ ມາ ຝັງ ລຶງ ບິນ ແຜ່ນ ສີ ລາ ຈະ ມີ ໃຜ - ກ້າ ຖອນ ມາ ຈາກ ຜືນ ທໍ ຣະ ນີ... ຄວາມ

B

9 Gm F Gm F Bb Cm F

ຫວັງ ຫັກ ຫຼັງ ຈຳ ຕ້ອງ ສູນ ສິ້ນ ຈະ ຂໍ ສັ່ງ ຟ້າ ຝາກ ດິນ ອິນ ພົມ ຈົ່ງ ໄດ້ - ເປັນ ສັກ ຂີ ຊາດ ໜ້າ ຈົ່ງ

13 Dm Gm Eb Bb F6 Gm

ພົບ ສຸກ ສົມ ອຸ ຣາ ຢ່າ ໄດ້ ໜ່າຍ ໜີ ຢ່າ ໄດ້ ເໝືອນ ຊາດ - ນີ້ ທີ່ ມີ ແຕ່ຄວາມເສົ້າ ໃຈ... ຄວາມ ຮັກ ຄັ້ງ

C

17 F C Dm Gm Bb D7

ກ່ອນ ນ້ອງພຽງ ແຕ່ ຄິດ ຢາກ ລອງ ແຕ່ ເໝືອນຟ້າ ດິນ ຊ່ວຍ ປ້ອງ ໃຫ້ ຄອງ ຮັກ ໃນ ຫົວ ໃຈ ຈະ ໃຫ້ ນ້ອງ

21 F Gm Cm Eb Bb Cm F D7

ລືມ ຈະ ລືມ ໄປ ໄດ້ ຢ່າງ ໃດ ມັນ ປັກ ຝັງ ລຶກ ຊວງ ໃນ ພາ ຫົວ ໃຈ - ໃຝ່ ຝັນ... ກ່ອນ

D

25 Gm F Gm F Bb Cm F

ນັ້ນ ນ້ອງ ຄິດ ສ້າງຄວາມຫວັງ ໄວ້ ແຕ່ ແລ້ວ ກໍ ຕ້ອງ ຈຳ ໃຈເພາະຮັກ ບໍ່ ໄດ້ - ດັ່ງ ຝັນ ມັນ ພາດ ຄວາມ

29 Dm Eb Bb Gm F6 To Coda 1. Gm

ຫວັງ ທີ່ ເຄີຍ ຫວັງ ປອງ ຕ້ອງ ປ່ຽນ ເຫ ຫັນ ຍ້ອນ - ຄວາມ ຮັກ - ນັ້ນ ວິ ມານ ສ ລາຍ ແລ້ວ ເອີຍ... (Solo verse B)

Coda

E

33 2. Gm Eb Bb Gm Gm9

ເອີຍ... (Coda) ____

Fine

# ຄັ້ງນຶ່ງໃນອະດີດ

Key : Gm
ເນື້ອຮ້ອງ & ທຳນອງ : ຄຳໃບ ຄຳຊະນະ
Slow Bolero
ນັກຮ້ອງຕົ້ນສະບັບ : ຈັນທີ ສີຣິພອນ
~1965

1) ຄວາມຫຼັງນັ້ນຫຼື ນ້ອງຈະລືມໄດ້
ມັນຝັງແນບຕິດດວງໃຈ ນ້ອງລືມບໍ່ໄດ້ເລີຍໝາ
ມັນປຽບເຂັມເພັດ ທີ່ມາຝັງລົງບົນແຜ່ນສີລາ
ຈະມີໃຜກ້າ ຖອນມາຈາກຜືນທໍຣະນີ

2) ຄວາມຫວັງຫັກຫຼັງ ຈຳຕ້ອງສູນສິ້ນ
ຈະຂໍສັ່ງຟ້າຝາກດິນ ອິນພົມຈຶ່ງໄດ້ເປັນສັກຂີ
ຊາດໜ້າຈຶ່ງພົບ ສຸກສົມອຸຣາຢ່າໄດ້ໜ່າຍໜີ
ຢ່າໄດ້ເໝືອນຊາດນີ້ ທີ່ມີແຕ່ຄວາມເສົ້າໃຈ

• ຄວາມຮັກຄັ້ງກ່ອນ ນ້ອງພຽງແຕ່ຄິດຢາກລອງ
ແຕ່ເໝືອນຟ້າດິນຊ່ວຍປ້ອງ ໃຫ້ຄອງຮັກໃນຫົວໃຈ
ຈະໃຫ້ນ້ອງລືມ ຈະລືມໄປໄດ້ຢ່າງໃດ
ມັນປັກຝັງລຶກຊອງໃນ ພາຫົວໃຈໃຝ່ຝັນ

3) ກ່ອນນັ້ນນ້ອງຄິດ ສ້າງຄວາມຫວັງໄວ້
ແຕ່ແລ້ວກໍຕ້ອງຈຳໃຈ ເພາະຮັກບໍ່ໄດ້ດັ່ງຝັນ
ມັນພາດຄວາມຫວັງ ທີ່ເຄີຍຫວັງປອງຕ້ອງປ່ຽນເຫຫັນ
ຍ້ອນຄວາມຮັກນັ້ນ ວິມານສລາຍແລ້ວເອີຍ...

# ເມື່ອເຮົາສອງຫວັງຄອງຮັກກັນ

ເນື້ອຮ້ອງ & ທຳນອງ : ..?..
ນັກຮ້ອງຕົ້ນສະບັບ : ບົວ ບັງໃບ

~1970

Slow Waltz (♩ = 60)

E G♯m F♯m B F♯m A E B

(Intro) ເມື່ອ ເຮົາ

**A** (1)

E C♯m F♯m B E

ສອງ ຫວັງ ຄອງ ຮັກ ກັນ ຫວັງ ຜູກ ພັນ ໃຫ້ ຄຳ ໝັ້ນ ໝາຍ___ ແຕ່ ຄວາມ

(6) C♯m A F♯m B B7

ຮັກ ເຮົາ ຕ້ອງ ກັບ ກາຍ ຖືກ ກັ້ນ ໄວ້ ຫວ່າງ ໃຈ ເຮົາ ສອງ...___ ອັນ ຄວາມ

**B** (11)

E C♯m F♯m B E

ຫວັງ ທີ່ ເຮົາ ຕັ້ງ ໃຈ ຢ້ານ ມະ ລາຍ ຊ້ຳ ໃນ ກັດ ໝອງ___ ຄຶງ ບໍ່

(16) C♯m A F♯m A E

ຄິດ ວ່າ ໃຈ ເຮົາ ສອງ ນັ້ນ ໝາຍ ປອງ ຮັກ ກັນ ເທົ່າ ໃດ...

**C** (20)

F♯m G♯m C♯m E B E7

ໃຈ ໜໍ່ - ໃຈ ຂອງ ຄົນ ໜໍ່ ນີ້ ບໍ່ ປຣາ ນີ ສິງ ສານ ຫຼື ໃດ___ ຈຶ່ງ ກັ້ນ

(26) A G♯m F♯m F♯ B B7

ກາງ ຮັກ ຫ້າມ ຫືອ ໃຈ ໃຫ້ ຮັກ ກາຍ ໄປ ເປັນ ຄວາມ ຝັນ...___ ເມື່ອ ເຮົາ

**D** (31)

E C♯m F♯m B E

ສອງ ໝາຍ ປອງ ຝັນ ໃຝ່ ຢ້ານ ຊ້ຳ ໃນ ດວງ ໃຈ ແປ ຜັນ___ ຫາກ ທ່ານ

(36) C♯m A B E

ຄິດ ເມດ ຕາ ຈັກ ວັນ ຄົງ ສຸກ ສັນ ໃນ ວັນ ນັ້ນ

To Coda 1. ເອີຍ... (Solo verse B)

**E** (40) Coda 2.

E G♯m F♯m B E

ເອີຍ... (Coda)

Fine

# ເມື່ອເຮົາສອງຫວັງຄອງຮັກກັນ

Key : E
Slow Waltz

ເນື້ອຮ້ອງ & ທຳນອງ : ..?..
ນັກຮ້ອງຕົ້ນສະບັບ : ບົວ ບັງໃບ

~1970

1) ເມື່ອເຮົາສອງ ຫວັງຄອງຮັກກັນ
ຫວັງຜູກພັນ ໃຫ້ຄຳໝັ້ນໝາຍ
ແຕ່ຄວາມຮັກ ເຮົາຕ້ອງກັບກາຍ
ຖືກກັ້ນໄວ້ ຫວ່າງໃຈເຮົາສອງ

2) ອັນຄວາມຫວັງ ທີ່ເຮົາຕັ້ງໃຈ
ຢ້ານມະລາຍ ຊ້ຳໃນກັດໝອງ
ຄົງບໍ່ຄິດ ວ່າໃຈເຮົາສອງ
ນັ້ນໝາຍປອງ ຮັກກັນເທົ່າໃດ

• | ໃຈໝໍ່ໃຈ ຂອງຄົນໝໍ່ນີ້
ບໍ່ປຣານີ ສິ່ງສານຫຼືໃດ
ຈຶ່ງກັ້ນກາງ ຮັກຫ້າມຫົວໃຈ
ໃຫ້ຮັກກາຍ ໄປເປັນຄວາມຝັນ

3) ເມື່ອເຮົາສອງ ໝາຍປອງຝັນໃຝ່
ຢ້ານຊ້ຳໃນ ດວງໃຈແປຜັນ
ຫາກທ່ານຄິດ ເມດຕາຈັກອັນ
ຄົງສຸກສັນ ໃນວັນນັ້ນເອີຍ...

# ດ້ອຍຮັກສມັກໃຈ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ

1999






























# ດ້ອຍຮັກສມັກໃຈ

Key : Bb
Slow Rock

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ

1999

1) ເຖິງນ້ອງຈະຜ່ານ ຊາຍມາຫຼາຍຄົນ ບໍ່ສົນຄວາມຫຼັງ
ເຖິງຈະເປັນຮ້າງ ຫຼືວ່າເປັນໝ້າຍ
ໂອ້ທາງຊີວິດ ພາດຜິດພຽງໃດ
ພົ້ງມາຫາໃໝ່ ຍັງໄດ້ຍັງມີ

2) ເຖິງວ່າຄົນອື່ນ ຊິງຊັງໝາງເມີນ ຫ່າງເຫີນເມີນໄກ
ຖອນເຍື່ອຖອນໃຍ ຖອນໃຈໜ່າຍໜີ
ອ້າຍຍັງສົນໃຈ ປອງໝາຍໄມຕຣີ
ຢາກໄດ້ເປັນສີ ຊີວາ

• ຢ່າໂສກເລີຍເຈົ້າ ຢ່າເສົ້າໝົ່ນໝອງ
ຜິນບຸນໝຸນຈ່ອງ ແຕ່ຊາດກ່ອນມາ
ເຮົາເຂົ້າໃຈກັນ ຮັກກັນດີກວ່າ
ຄວາມຫຼັງຜ່ານມາ ຖືວ່າຝັນໄປ

3) ຮັກຈິງຍິ່ງໃຫຍ່ ດ້ອຍໃຈໝັ້ນຄົງ ຊື່ຕຣົງຈິງຮັກ
ດ້ອຍໃຈສມັກ ພັກດີຕລອດໄປ
ພ້ອມກັນສ້າງສັນ ສວັນອຳໄພ
ຢ່າຫວັ່ນຢ່າໄຫວ ພັຍພານ...
(ເທື່ອສຸດສຸດທ້າຍ ເຖິດໝາ...)

# ລຳບາກໃຈ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ

1993

Slow Rock (♩ = 68)

(Intro)

ໃຫ້ -

A
ໃຈ ໄປ ຮັກ ເຂົາ ເຮັດ ຫຍັງ ຈະ ຫວັງ ໃນ ຮັກ - ຈັກພຽງ ໃດ ກໍ
ເຂົາ - ມີ - ແລ້ວ - ຄືນ ຄູ່ ໃຈ ຈະ ໝາຍ ປອງ ຮັກ ຄົງ ໝົດ ທາງ... ເມື່ອ -

B
ເຫັນ ເມື່ອ ພົບ - ປະ ສົບ ຕາ ດັ່ງ ວ່າ ໃຈ ເຂົາ - ຈະ ຈິງ ຈັງ ຮູ້ -
ທັນ - ບັນ - ຫາ - ທີ່ປ່ຽນ ພະລັງ ຫາ ທາງ ມຸ່ງ ຫວັງ ສົມ ດັ່ງ ໝາຍ... ແຕ່ ຄິດ

C
ແລ້ວ ຄົງ ຈະ ຍາກ ຄົງ ລຳ ບາກ ສຸດ ວິ ສັຍ ສຸດ ຈະ
ຝືນ ຄວາມ ຝັນ - ໃຝ່ ສຸດ ຫ້າມ ໃຈ ຫອບ ໄຫ້ ຮຽກ ຫາ... ຊາດ -

D
ນີ້ ຄົງ ໄດ້ - ໄດ້ ແຕ່ ຄິດ ເສົ້າ ຈິດ ຄິດ ແລ້ວ - ໝອງ ອຸ ຣາ ຢ້ານ ບໍ່
ສົມ - ດັ່ງ - ມາດ - ປຣາ ຖ ນາ ຄິດ ວ່າ ຊາດ ນີ້ ຄົງ ຜິດ ຫວັງ...

To Coda — 1. — (Solo verse B)

Coda

E
2. (♩ = 20) rall... (♩ = 68)
ວ່າ ຊາດ ນີ້... ຄົງ ຜິດ ຫວັງ...
(Coda) (♩ = 25) Fine

# ລຳບາກໃຈ

Key : Cm
Slow Rock

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ

1993

1) ໂຫ້ໃຈ ໄປຮັກ ເຂົາເຮັດຫຍັງ
ຈະຫວັງ ໃນຮັກ ຈັກພຽງໃດ
ກໍເຂົາ ມີແລ້ວ ຄົນຄູ່ໃຈ
ຈະໝາຍ ປອງຮັກ ຄົງໝົດທາງ

2) ເມື່ອເຫັນ ເມື່ອພົບ ປະສົບຕາ
ດັ່ງວ່າ ໃຈເຂົາ ຈະຈິງຈັງ
ຮູ້ທັນ ບັນຫາ ທີ່ປ່ຽນພະລັງ
ຫາທາງ ມຸ່ງຫວັງ ສົມດັ່ງໝາຍ

• ແຕ່ຄິດແລ້ວ ຄົງຈະຍາກ
ຄົງລຳບາກ ສຸດວິສັຍ
ສຸດຈະຝືນ ຄວາມຝັນໃຝ່
ສຸດຫ້າມໃຈ ຫອນໄຫ້ຮຽກຫາ

3) ຊາດນີ້ ຄົງໄດ້ ໄດ້ແຕ່ຄິດ
ເສົ້າຈິດ ຄິດແລ້ວ ໝອງອຸຣາ
ຢ້ານບໍ່ສົມ ດັ່ງມາດ ປຣາຖນາ
ຄິດວ່າ ຊາດນີ້ ຄົງຜິດຫວັງ...

# ລືມຊ໋ະ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ສົມພອງ ຊົງມີໄຊ

1969
































# ລືມຊຸ໋ະ

Key : Cm
Slow Soul

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ສິມຟອງ ຊີງມີໄຊ

1969

1) ລືມ      ຂໍເຊີນອ້າຍລືມ      ຄວາມຫຼັງ
ລືມ      ລືມຄຳສາບານ      ສັນຍາ

2) ລືມ      ແມ່ນລືມໄດ້ແລ້ວ      ບອກມາ
ລືມ      ໃຫ້ລືມຈົນກວ່າ      ສິ້ນໃຈ

- ນ້ອງ      ເປັນຍິງຕ້ອຍຕ່ຳ
ເຖິງ      ຈະຊ້ຳທົນໄດ້
ຍອມ      ຫຼີກທາງໃຫ້ໄປ
ແມ່ນອ້າຍລືມໄດ້      ນ້ອງຂໍຂອບໃຈເທົ່າຟ້າ

3) ລືມ      ຂໍໃຫ້ອ້າຍລືມ      ເຖິດໜາ
ລືມ      ຊາດນີ້ຊາດໜ້າ      ໃຫ້ລືມ...

# ຈັນສຸຣິ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທ່ຽງ ມະນີວົງ

1970

Beguine (♩ = 95)

E♭ Fm B♭ E♭ Cm B♭ E♭ Cm B♭

(Intro)



























# ຈັນສຸຣີ

Key : Eb
Beguine

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໝໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທ່ຽງ ມະນີວົງ

1970

1) ໂອ້ດວງ ສຸຣິຍາ
ສ່ອງນະພາ ແຈ່ມໃສ
ແຫງນງອກ ເບິ່ງໄປ
ພາຫົວໃຈ ໃຫ້ສຸກສັນ

2) ໂອ້ດວງ ຈັນທຣາ
ເດັ່ນບົນຟ້າ ສວັນ
ສູງກວ່າ ເກີນຝັນ
ໃຝ່ຫາຈັນ ມາໄວ້ຄອງ

• | ຍາມໃດ ຟ້າແຈ່ມສີ
ໂອ້ສຸຣີ ສິ່ງແສງສ່ອງ
ຍາມໃດ ນະພາຜ່ອງ
ເດືອນຍັງສ່ອງ ແສງລັບລອຍ

3) ໂອ້ດວງ ຈັນສຸຣີ
ແຜ່ໄມຕຣີ ຈັກນ້ອຍ
ຂໍຢ່າ ເລື່ອນລອຍ
ປ່ອຍຫົວໃຈ ໃຫ້ໝອງເສົ້າ...

# ອະນຸພາບຮັກ

ເນື້ອຮ້ອງ & ທຳນອງ : ບຸນທັນ ສີພຣິທົນໄຊຍ໌

ນັກຮ້ອງຕົ້ນສະບັບ : ຈັນທີ ສີຣິພອນ

1969






























# ອະນຸພາບຮັກ

Key : Db
ເນື້ອຮ້ອງ & ທຳນອງ : ບຸນທັນ ສີພຣິຫົມໄຊຍ໌
Slow Bolero
ນັກຮ້ອງຕົ້ນສະບັບ : ຈັນທີ ສິຣິພອນ
1969

1) ແວ່ວຄຳຝາກຮັກ ຈາກປາກຂອງຊາຍ
ຊາບຊຶ້ງຣິທັຍ ຄິດໄປນຶກອາຍໄຫວຫວັ່ນ
ເຂົາເຝົ້າວິ່ງວອນ ອ້ອນອອດ
ເຂົາເຝົ້າພ່ຳພອດ ແຕ່ຄຳຫວານ
ເຂົາຊ່າງເສກສັນ ປັ້ນຄຳຍ້ອງຍໍ

2) ໄດ້ຍິນຄຳຮັກ ສລັກຫົວໃຈ
ຫວາບຫວິວຊວງໃນ ຮ້ອນຮົນເໝືອນໄຟສຸມກໍ່
ຫ້າມໃຈຫັກໃຈ ແສນຍາກ
ຫຼືວ່າເກີດຮັກ ເຂົາແລ້ວໜໍ
ຫົວໃຈຈິດຈໍ່ ຕໍ່ເຂົາຜູ້ດຽວ

• ໂອ້...ຄວາມສາວ ເຖິງຄາວແຮກເລີ່ມ
ເໝືອນຮວງເຂົ້າ ພອນເຫີມ
ລໍຄອງຖ້າຄືນ ເກັບກ່ຽວ
ອະນຸພາບຄວາມຮັກ ມີຄືນເໝືອນກຽວ
ພຽງເຂົາບອກຮັກຄຳດຽວ ກ່ຽວຫົວໃຈໃຝ່ຝັນ

3) ຢາກບອກຄຳຮັກ ຮັບຕອບເຂົາໄປ
ໃຫ້ຮູ້ຄວາມໃນ ກໍຍັງນຶກອາຍໃຈສັ່ນ
ຝືນອຳເກັບໄວ້ ໃນອົກ
ເໝືອນໄຟໄໝ້ໝົກ ຈິດສະທ້ານ
ຮັກຕາມພົວພັນ ທຸກວັນແລະຄືນ...

# ຖ້າມີທີ່ຮັກ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

Slow Soul (♩ = 85) — 1980

Bb Gm Eb F
(Intro) ____

**A**
Bb D7 Gm Bb7 Eb
ຮາ ຕຣີ ນີ້ ງາມ ຍິ່ງ ນັກ____ ຖ້າ ຫາກ ມີ ຮັກ ມີ ນ້ອງ ຄຽງ ໃກ້
Cm F Gm F Ab
ອ້າຍ ຄົງ ເພີດເພີນ ສຸກ ຊຶ້ງ ອຣິ ທັຍ____ ຈະ ກອດ ເຈົ້າ ໄວ້ ໃຫ້ ສິ້ນ ອຸ ຮາ...

**B**
F Bb D7 Gm Bb7 Eb
ລົມ ຫວີດຫວິວ ປິວ ກິ່ງ ໄມ້____ ເມກ ຜ່ານ ລອຍ ໄຫຼ ໂລມ ລູບ ຈັນ ທຣາ
Cm F Gm F Bb Eb
ງົດ ງາມ ເຫຼືອ ຄຳ ຈະ ພັນ ຣະ ນາ____ ຄົງ ສຸກ ຈິງ ໝາ ຖ້າ ມີ ຂວັນ ໃຈ...

**C**
Bb Cm F Bb Dm
ຮາ ຕຣີ ນີ້ ງາມ ຍິ່ງ ນັກ____ ແຕ່ ຂາດ ຄົນ ຮັກ ດູ ວຽບ ເຫງົາ ໄປ
Gm Eb Edim F
ບໍ່ ມີ ນ້ອງ ນາງ ກໍ ຂາດ ຄວາມ ໝາຍ____ ເຈົ້າ ຫຼົບ ຢູ່ ໃສ ຍອດ - ຊູ້...

**D**
Bb D7 Gm Bb7 Eb
ຈັນ ສາດ ສີ ນວນ ງາມ ນັກ____ ຖ້າ ຫາກ ມີ ຮັກ ມີ ນ້ອງ ຄຽງ ຄູ່
Cm F Gm F — To Coda — 1. Bb Eb
ສອງ ຄົນ ພ່ຳ ພອດ ອອດ ອ້ອນ ຊື່ນ ຊູ____ ແຕ່ ຂາດ ຍອດ ຊູ້ ກໍ ດູ ປ່ຽວ ໃຈ...

(Solo verse B)

**E** Coda
2. Bb Gm Eb F Bb6
ໃຈ... (Coda) ____

Fine

# ຖ້າມີທີ່ຮັກ

Key : Bb
Slow Soul

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1980

1) ธາຕຣີນີ້ງາມ ຍິ່ງນັກ
ຖ້າຫາກມີຮັກ ມີນ້ອງຄຽງໃກ້
ອ້າຍຄົງເພີດເພີນ ສຸກຊື່ງອີທັຍ
ຈະກອດເຈົ້າໄວ້ ໃຫ້ສິມອຸธາ

2) ລືມຫວິດຫວິວປິວ ກິ່ງໄມ້
ເມກຜ່ານລອຍໄຫຼ ໂລມລູບຈັນທຣາ
ວິດງາມເຫຼືອຄຳ ຈະພັນธະນາ
ຄົງສຸກຈິງໜາ ຖ້າມີຂວັນໃຈ

• ธາຕຣີນີ້ງາມ ຍິ່ງນັກ
ແຕ່ຂາດຄົນຮັກ ດູງຽບເຫງົາໄປ
ບໍ່ມີນ້ອງນາງ ກໍຂາດຄວາມໝາຍ
ເຈົ້າຫຼົບຢູ່ໃສ ຍອດຊູ້

3) ຈັນສາດສີນວນ ງາມນັກ
ຖ້າຫາກມີຮັກ ມີນ້ອງຄຽງຄູ່
ສອງຄົນພໍ່າພອດ ອອດອ້ອນຊື່ນຊູ
ແຕ່ຂາດຍອດຊູ້ ກໍດູປ່ຽວໃຈ...

# ໜ້າທີ່ພາຈາກ

ເນື້ອຮ້ອງ & ທຳນອງ : ທະວີສິທ ກຸສີລ
ນັກຮ້ອງຕົ້ນສະບັບ : ປ. ຕຣີຈັນ

~1970




(Intro) ____________________




ເມື່ອ ຮັບ ຄຳ ສັ່ງ ຟັງ ແລ້ວ ໃຈ ຫາຍ ເໝືອນຕາຍ ທັງ ເປັນ____ ຄ້າຍ ຖືກ ກະ ເດັນ ຈາກ ໂລກ ນີ້ ໄປ




ທ່ອງ ໃຍ ອາ ວອນ ຮ້າວ ຮອນ ດວງ ໃຈ____ ຕ້ອງ ຈາກ ທ່າງ ໄກ ຖິ່ນ ເຄີຍ ສຸກ ສັນ...




ດັ່ງ ຟ້າ ຂາດເພື່ອນດາວເດືອນ ອັບ ແສງ ແຜງຄວາມມືດ ໝົ່ນ____ ເໝືອນດັ່ງ ສາຍ ຊີນ ຂາດ ມັດ ສາ ນັ້ນ




ຕ້ອງ ຈຳ ໃຈ ລາ ອຸ ຣາ ໄໜວ ຫວັ່ນ____ ແລ້ວ ຈາກ ທ່າງ ກັນ ຕາມ ທາງ ແຫ່ງ ກັນ...




ເປັນ ເຮືອ ລຳ ດຽວ ທີ່ ລອຍ ຢູ່ ກາງ ສາຍ ຊີນ____ ຟອງ ນ້ຳ ພັດ ວົນ ວຽນ ຕາມ




ເຫັນ ພຽງ ຂອບ ຟ້າ ອຸ ຣາ ຣະ ກຳ____ ລະ ເມີ ຄວນ ຄ່ຳ ສຸດ ທ່ອງ...




ນຶກ ເຖິງ ໜ້າ ທີ່ ມີ ທາງ ໜ້າ ນັ້ນ ຟ້າ ບັນ ດານ ມາ____ ໃຫ້ ໝົດ ປັນ ຍາ ຈະ ຫຼີບ ລີ້ ລ່ອງ




ຝາກ ພຽງ ດວງ ໃຈ ຮັກ ໄວ້ ເປັນ ທ່ອງ____ ຄ່ອຍ ກັບ ມາ ທອງ ເມື່ອ ຄາວ ສິ້ນ ເວນ... (Solo verse B)




ເວນ... (Coda) ____________________

# ໜ້າທີ່ພາຈາກ

Key : G
Slow

ເນື້ອຮ້ອງ & ທຳນອງ : ທະວີສິທ ກຸສີລ
ນັກຮ້ອງຕົ້ນສະບັບ : ປ. ຕຣີຈັນ

~1970

1) ເມື່ອຮັບຄຳສັ່ງ ຟັງແລ້ວໃຈຫາຍ
ເໝືອນຕາຍທັງເປັນ ຄ້າຍຖືກກະເດັນຈາກໂລກນີ້ໄປ
ຫ່ວງໃຍອາວອນ ຮ້າວຮອນດວງໃຈ
ຕ້ອງຈາກຫ່າງໄກ ຖິ່ນເຄີຍສຸກສັນ

2) ດັ່ງຟ້າຂາດເພື່ອນ ດາວເດືອນອັບແສງ
ແຜງຄວາມມິດໝັ້ນ ເໝືອນດັ່ງສາຍຊິນຂາດມັດສານັ້ນ
ຕ້ອງຈຳໃຈລາ ອຸຣາໄຫວຫວັ່ນ
ແລ້ວຈາກຫ່າງກັນ ຕາມທາງແຫ່ງກັມ

• ເປັນເຮືອລຳດຽວ ທີ່ລອຍຢູ່ກາງສາຍຊິນ
ຟອງນ້ຳພັດວິນ ວຽນຕາມ
ເຫັນພຽງຂອບຟ້າ ອຸຣາຣະກຳ
ລະເມີຄວນຄ່ຳ ສຸດຫ່ວງ

3) ນຶກເຖິງໜ້າທີ່ ມີທາງໜ້ານັ້ນ
ຟ້າບັນດານມາ ໃຫ້ໝົດປັນຍາຈະຫຼີບລີ້ລ່ອງ
ຝາກພຽງດວງໃຈ ຮັກໄວ້ເປັນຫ່ວງ
ຄ່ອຍກັບມາທວງ ເມື່ອຄາວສິ້ນເວນ...

# ດອກຟ້າຂອນແກ່ນ

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ສ. ແສງສີຣິວັນ

~1970

Swing Jazz (♩ = 122)






























# ດອກຟ້າຂອນແກ່ນ

Key : E
Swing Foxtrot

ເນື້ອຮ້ອງ & ທຳນອງ : ສ. ແສງສີອີວັນ
ນັກຮ້ອງຕົ້ນສະບັບ : ສ. ແສງສີອີວັນ

~1970

1) ໂອ້ ກຸສິນໃດ
ນ້ອມໃຈ ໃຫ້ມາເຫັນ
ນິ່ງ ນ້ອງງາມເດັ່ນ
ສົມກັບເປັນ ດອກຟ້າຂອນແກ່ນ

2) ເບິ່ງ ຮອຍຍິ້ມນາງ
ສວຍງາມ ຕິດໃຈແສນ
ຂ້າ ຄົນຕ່າງແດນ
ຢາກລິ້ງແກ່ນ ຢາກຝາກໄມຕຣີ

• ໄກຄົນລະຖິ່ນ ຟາກຝັ່ງນ້ຳຂອງ
ບຸນຍັງນຳຈ່ອງ ໃຫ້ມາຖິ່ນນີ້
ຈຶ່ງວອນດອກຟ້າ ຂອນແກ່ນປຣານີ
ຂ້າຄົນພັດທີ່ ຂໍຝາກໃຈ

3) ກາບ ວອນຟ້າດິນ
ຄຸ້ມຄອງ ຢ່າໃຫ້ອາຍ
ໂປຣດ ດົນຈິດໃຈ
ສາວຂອນແກ່ນ ໃຫ້ເກີດເອັນດູ...

# ອອກພັນສາພາເພີນ

ເນື້ອຮ້ອງ & ທຳນອງ : ສົມລິດ ພັນນະວົງສ໌
ນັກຮ້ອງຕົ້ນສະບັບ : ຈັນຖນອມ & ສົມລິດ

~1970

Soul (♩ = 114)

Gm Cm Gm Cm Gm

(Intro)

Bb Gm D7

**A**

1 Gm Bb Gm Bb Gm D7

ເດືອນ ສິບ ເອັດ ນ້ຳ - ນອງ ໂອ້ - ນ້ຳ ຂອງ ໄຫຼ - ຫຼັ່ງ ປະ ເພ

5 Cm Bb Cm D7

ນີ ລາວ ແຕ່ ປາງ ຫຼັງ___ ນັ້ນ - ຍັງ ຮັກ ສາ ເອົາ ໄວ້...

**B**

9 Gm Bb Gm Bb Gm D7

ເດືອນ ສິບ ເອັດ ເພັງ - ມາ ອອກ ພັນ ສາ ສຸກ ໃຈ ຕຶກ ກາງ

13 Cm Bb F Gm Bb

ຄືນ ເຮືອ ໄຟ ລ່ອງ ໄຫຼ - ສ ອ່າງ ສ ໄວ ທີ່ອ ສາຍ - ນະ ທີ... ຄ່ຳ

**C**

17 Gm Bb Gm Bb

ນີ້ງ ນ້ຳ ຂອງ - ເຮືອ ຍາວ ໄຫຼ - ລ່ອງ - ຊ່ວງ ກັນ ອີ່ ຫຼີ ອີ່ ເທບ - ນາ

21 Cm F Gm D7

ວາ ອີ່ ທຶງ - ກໍ - ມີ ສີ ພາຍ ບໍ່ ດີ ໂອ້ຍ ຈ້າງ ກະ ບໍ່ ໄປ...

**D**

25 Gm Bb Gm Bb Gm D7

ໂອ່... ໂຮ່ ໂອ ໂອ້ ໂອ... ເຫຼົ້າ ສາ ໂທ ແກ້ວ - ໃຫຍ່ ສີ ພາຍ

29 Cm Bb D7 Gm D7 To Coda

ດີ ບໍ່ ຕ້ອງ - ຫວັ່ນ ໄຫວ ເອົ້າ ເຢີກ ເຂົ້າ ໄປ ເຮືອ ທໍ - ພຣະ ແກ້ວ - ເອີຍ...

**E**

33 1. Gm Cm Gm D7 Gm D7

(Solo) (Back from verse A)

**F**

Coda 2.

41 Cm Gm Cm Gm Cm D7 Gm Cm Gm D7 Gm

(Coda)

Fine

# ອອກພັນສາພາເພີນ

Key : Gm
Soul

ເນື້ອຮ້ອງ & ທຳນອງ : ສົມລິດ ພັນນະວົງສ໌
ນັກຮ້ອງຕົ້ນສະບັບ : ຈັນຖຸນອມ & ສົມລິດ

~1970

1) ເດືອນສິບເອັດ ນ້ຳນອງ
ໂອ້ນ້ຳຂອງ ໄຫຼຫຼັ່ງ
ປະເພນີລາວ ແຕ່ປາງຫຼັງ
ນັ້ນຍັງຮັກສາ ເອົາໄວ້

2) ເດືອນສິບເອັດ ເພັງມາ
ອອກພັນສາ ສຸກໃຈ
ຕົກກາງຄືນ ເຮືອໄຟລ່ອງໄຫຼ
ສວ່າງສໄວທົ່ວສາຍ ນະທີ

• ຄ່ຳນີ້ງ ນ້ຳຂອງ
ເຮືອຍາວໄຫຼລ່ອງ ຊ່ວງກັນອີ່ຫຼີ
ອີ່ເທບນາວາ ອີ່ຫີງກໍມີ
ສີພາຍບໍ່ດີ ໂອ້ຍຈ້າງກະບໍ່ໄປ

3) ໂອ່...ໂຮ່ໂອ ໂຮ່ໂອ
ເຫຼົ້າສາໂທ ແກ້ວໃຫຍ່
ສີພາຍດີ ບໍ່ຕ້ອງຫວັ່ນໄຫວ
ເອົ້າເຢີກເຂົ້າໄປ ເຮືອທໍພຣະແກ້ວເອີຍ...

# ນ້ຳໃຈລາວ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ສຸມຸນທາ ສີຣິມະໂນທັມ

1960

Lamvong Lao (♩= 122)

(Intro) ເມືອງ

**A**
ລາວ ຂອງ ເຮົາ ແຕ່ ເກົ່າ ກ່ອນ ລາວ ຈະ ເຣີນ ຖາ - ວອນ ຢູ່ ເຢັນ ສຸກ ສັນ___ ບໍ່ ໄດ້ ກໍ່ ເຣື່ອງ ຣາວ ຂ້າ ຟັນ - - ບໍ່ ໄດ້ ກໍ່ ເຣື່ອງ ຣາວ ຂ້າ ຟັນ___ ລາວ ເຮົາ ຜູກ ສຳ ພັນ - ຮັກ ກັນ ຕ ລອດ ມາ... ຊິນ ຊາວ

**B**
ລາວ ເປັນ ຄົນ ຮັກ ຊາດ ນັກ ສ ງົບ ກຽດ ການ ສົງ ຄາມ ລາວ ທັງ ເມືອງ ບໍ່ ໄດ້ ອ່ອນ ແອ ລາວ ທັງ ເມືອງ ບໍ່ ໄດ້ ອ່ອນ ແອ ລາວ ພາ ກັນ ຍຶດ ໝັ້ນ ໃນ ສາ ມັກ ຄີ... ຖ້າ ຫາກ

**C**
ມີ ສັ ຕຣູ ມາ ຣຸກ ຣານ ລ້ຳ ດິນ ແດນ ເຂດ ບ້ານ___ ຢຽບ ຍ່ຳ ເມືອງ ລາວ ຈະ ຂໍ - ສູ້ ໃຫ້ ຊາດ ຢູ່ ຍົງ ຈະ ຂໍ - ສູ້ ໃຫ້ ຊາດ ຢູ່ ຍົງ ໃຫ້ ຊາດ ລາວ ໝັ້ນ ຄົງ ຖ ວາຍ ຊີ ວິ - ປຣະ ກັນ... ລາວ ເປັນ

**D**
ມິດ ກັບ ທຸກ ຄົນ ເພື່ອນ ບ້ານ ລາວ ບໍ່ ໄດ້ ຣຸກ ຣານ - ຫັກ ຫານ ແດນ ໃຜ___ ລາວ ເຮົາ ຢູ່ ດ້ວຍ ສິດ ເສ ຣີ ລາວ ເຮົາ ຢູ່ ດ້ວຍ ສິດ ເສ ຣີ - ບໍ່ ແຊກແຊງ ຣາ ວີ - ເປັນ ມິດ ໄມ ຕຣີ - ຜູກ ພັນ... ເຊີນ ຊາວ

**E**
ລາວ ຮີບ ມາ ຮ່ວມ ໃຈ ຮັກ ສາ ໄວ້ ຊຶ່ງ ຣັຖ - ທັມ ມະ ນູນ ມາ ເຮົາ ມາ ເຊີນ ເຖີດ ຊາວ ລາວ ມາ ເຮົາ ມາ ເຊີນ ເຖີດ ຊາວ ລາວ ສາ ມັກ ຄີ ຍືນ ຍາວ ສ້າງ ເມືອງ ລາວ ສືບ ໄປ... ເປັນ ແບບ

**F**
ຢ່າງ ແກ່ ຄົນ ຮຸ່ນ ໃໝ່ ຄວາມ ໝັ້ນ ຄົງ ຈະ ໄດ້ - ຢູ່ ຢັ້ງ ຍືນ ຍົງ ຮັກ ສາ ຊາດ ສາ ມາດ ເຂັ້ມ ແຂງ ຮັກ ສາ ຊາດ ສາ ມາດ ເຂັ້ມ ແຂງ ເໝືອນ ທຸງ ຊາດ ສີ ແດງ ເທີດ ໄວ້ ໃຫ້ ລາວ - ຈະ ເຣີນ... (Solo verse D)

To Coda 1.

Coda 2.

**G**
ເຣີນ... (Coda) ___ *rall...* ___

Fine

# ນ້ຳໃຈລາວ

Key : E
Lamvong Lao

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ສຸມຸນທາ ສີຣິມະໂນທັມ

1960

1) ເມືອງລາວຂອງເຮົາ    ແຕ່ເກົ່າກ່ອນ
ລາວຈະເຣີນຖາວອນ    ຢູ່ເຢັນສຸກສັນ
ບໍ່ໄດ້ກໍ່ເຣື່ອງຣາວ    ຂ້າຟັນ (ຊ້ຳ)
ລາວເຮົາຜູກສຳພັນ    ຮັກກັນຕລອດມາ

2) ຊົນຊາວລາວ    ເປັນຄົນຮັກຊາດ
ມັກສງົບກຽດການ    ສົງຄາມ
ລາວທັງເມືອງ    ບໍ່ໄດ້ອ່ອນແອ (ຊ້ຳ)
ລາວພາກັນຍຶດໝັ້ນ    ໃນສາມັກຄີ

3) ຖ້າຫາກມີສັດຣູ    ມາຮຸກຮານ
ລ້ຳດິນແດນເຂດບ້ານ    ຢຽບຍ່ຳເມືອງລາວ
ຈະຂໍສູ້ໃຫ້ຊາດ    ຢູ່ຍິງ (ຊ້ຳ)
ໃຫ້ຊາດລາວໝັ້ນຄົງ    ຖວາຍຊີວິປຣະກັນ

4) ລາວເປັນມິດກັບ    ທຸກຄົນເພື່ອນບ້ານ
ລາວບໍ່ໄດ້ຮຸກຮານ    ຫັກຫານແດນໃຜ
ລາວເຮົາຢູ່    ດ້ວຍສິດເສຣີ (ຊ້ຳ)
ບໍ່ແຊກແຊງຣາວີ    ເປັນມິດໄມຕຣີຜູກພັນ

5) ເຊີນຊາວລາວ    ຣີບມາຮ່ວມໃຈ
ຮັກສາໄວ້    ຊຶ່ງຣັຖທັມມະນູນ
ມາເຮົາມາ    ເຊີນເຖີດຊາວລາວ (ຊ້ຳ)
ສາມັກຄີຍືນຍາວ    ສ້າງເມືອງລາວສືບໄປ

6) ເປັນແບບຢ່າງ    ແກ່ຄົນຮຸ່ນໃໝ່
ຄວາມໝັ້ນຄົງຈະໄດ້    ຢູ່ຢັ້ງຍືນຍົງ
ຮັກສາຊາດ    ສາມາດເຂັ້ມແຂງ (ຊ້ຳ)
ເໝືອນທຸງຊາດສີແດງ    ເທີດໄວ້ໃຫ້ລາວຈະເຣີນ...

# ເມົາ

ເນື້ອຮ້ອງ & ທຳນອງ : : ບຸນຈັນ ໄຊຍະຈິດ
ນັກຮ້ອງຕົ້ນສະບັບ : : ບຸນຈັນ ໄຊຍະຈິດ

1981

Lamvong Lao (♩ = 124)

(Intro)

A

1 ເມົາ ເມົາ ເມົາ ຖ້າ ຫາກ ໄດ້ ເມົາ - ແລ້ວ ຈະ ສຸກ ໃຈ ໜັກ ໜາ___ ສິ່ງ ທີ່ ຫວັງ ຈະ ຫຼັ່ງ ລິງ ມາ -

6 - ສິ່ງ ທີ່ ຫວັງ ຈະ ຫຼັ່ງ ລິງ ມາ___ ສິ່ງ ປຣາ ຖ ນາ - ນັ້ນ ກໍ ຈະ ຫຼັ່ງ ມາ - ເອງ... ຈອກ ທີ່

B

11 ໜຶ່ງ ທີ່ ດື່ມ ຜ່ານ ໄປ - ເຫັນ ທາງ ສົດ ໃສ - ງາມ ວິ ໄລ ຜຸດ ຜ່ອງ___ ຢາກ ໃຫ້ ດີ ຕ້ອງ ຈອກ ທີ່ ສອງ-

16 - ເຫັນ ໜ້າ ນວນ ນ້ອງ - ຜ່ອງ ພັນ - ໂສ - ພາ ຈອກ ທີ່ ສາມ ລອງ ອີກ ເຖິດ ໜາ - ຈອກ ທີ່

21 ສາມ ລອງ ອີກ ເຖິດ ໜາ - ແຫງນ ເບິ່ງ ບົນ ຟ້າ - ຈະ ເຫັນ ດາ ຣາ - ລອຍ ວົນ... ຈອກ ທີ່

C

25 ສີ່ ກໍ ດີ ເໝືອນ - ກັນ ພໍ ດື່ມ ແລ້ວ ຫວານ - ດັ່ງ ເອົາ ນ້ຳ ຕານ ມາ ປົນ___ ຈອກ ທີ່ ຫ້າ ເໝືອນ ຟ້າ - ບັນ ດົນ -

30 - ເຫັນ ໜ້າ ຝູງ ຊົນ - ໄດ້ ແຕ່ ພຽງ ເລື່ອນ - ລອຍ ຈອກ ທີ່ ຫົກ ແລະ ທີ່ ເຈັດ ຍິ່ງ ຫຼົງ - ທາງ ຈອກ ທີ່

35 ຫົກ ແລະ ທີ່ ເຈັດ ຍິ່ງ ຫຼົງ - ທາງ ເຫັນ ໜ້າ ນວນ ນາງ - ແລ້ວ ຍັງ ບໍ່ ຄິດ ສິນ - ໃຈ... ສຸ ຣາ

D

39 ເມ ຣະ ຍະ ມັສ ສະ ປະ ມາ ເປັນ ສິລ ຂໍ້ ຫ້າ - ທີ່ ພຸທ ທະ ອົງ ກ່າວ ໄວ້___ ເຣື່ອງ ສຸ ຣາ ຖ້າ ໄດ້ ດື່ມ ລົງ ໄປ -

44 - ເຣື່ອງ ສຸ ຣາ ຖ້າ ໄດ້ ດື່ມ ລົງ ໄປ - ຫາກ ໄປ ບໍ່ ໄຫວ - ໃຫ້ ເປັນ ໄລ ຍະ - ກໍ ຍັງ ດີ... (Back from Intro)

To Coda 1.

Coda

E

49 2. ດີ... ຫາກ ໄປ ບໍ່ ໄຫວ - ໃຫ້ ເປັນ ໄລ ຍະ - ກໍ ຍັງ ດີ... ຫາກ ໄປ ບໍ່ ໄຫວ - ໃຫ້ ເປັນ ໄລ ຍະ - ກໍ ຍັງ

53 ດີ... (Coda) ___ *rall...* ___

Fine

# ເມົາ

Key : E
Lamvong Lao

ເນື້ອຮ້ອງ & ທຳນອງ : ບຸນຈັນ ໄຊຍະຈິຕ
ນັກຮ້ອງຕົ້ນສະບັບ : ບຸນຈັນ ໄຊຍະຈິຕ

1981

(ສອຍ) ເມົາ ເມົາ ເມົາ ຖ້າຫາກໄດ້ເມົາ
ແລ້ວຈະ ສຸກໃຈໜັກໜາ
ສິ່ງທີ່ຫວັງ ຈະຫຼັ່ງລົງມາ (ຊ້ຳ)
ສິ່ງປຣາຖນາ ນັ້ນກໍຈະຫຼັ່ງມາເອງ...

1) ຈອກທີ່ໜຶ່ງ ທີ່ດື່ມຜ່ານໄປ
ເຫັນທາງສົດໃສ ງາມວິໄລຜຸດຜ່ອງ
ຢາກໃຫ້ດີ ຕ້ອງຈອກທີ່ສອງ
ເຫັນໜ້ານວນນ້ອງ ຜ່ອງພັນໂສພາ
ຈອກທີ່ສາມ ລອງອີກເຖີດໜາ (ຊ້ຳ)
ແຫງນເບິ່ງບົນຟ້າ ຈະເຫັນດາຣາລອຍວົນ...

2) ຈອກທີ່ສີ່ ກໍດີເໝືອນກັນ
ພໍດື່ມແລ້ວຫວານ ດັ່ງເອົານ້ຳຕານມາປົນ
ຈອກທີ່ຫ້າ ເໝືອນຟ້າບັນດົນ
ເຫັນໜ້າຝູງຊົນ ໄດ້ແຕ່ພຣຽງເລື່ອນລອຍ
ຈອກທີ່ຫົກ ແລະທີ່ເຈັດຍິ່ງຫຼົງທາງ (ຊ້ຳ)
ເຫັນໜ້ານວນນາງ ແລ້ວຍັງບໍ່ຄິດສິນໃຈ...

3) ສຸຣາເມ ຣະຍະມັສສະປະມາ
ເປັນສີລຂໍ້ຫ້າ ທີ່ພຸທທະອົງກ່າວໄວ້
ເຣື່ອງສຸຣາ ຖ້າໄດ້ດື່ມລົງໄປ (ຊ້ຳ)
ຫາກໄປບໍ່ໄຫວ ໃຫ້ເປັນໄລຍະກໍຍັງດີ...

# ນ້ຳຖ້ວມຖິ່ນເພັຽ

ເນື້ອຮ້ອງ & ທຳນອງ : ໄຊພອນ ສິນທະຣາດ
ນັກຮ້ອງຕົ້ນສະບັບ : ໄຊພອນ ສິນທະຣາດ

<1975

Lamvong Lao (♩ = 124)

Cm Bb Ab Fm Ab Bb Eb

(Intro) ____________________

**A**

1 Cm Bb Ab Cm Fm Cm

ນ້ຳ ຂຶ້ນ ລົ້ນ ຝັ່ງ ໄຫຼ ຖ້ວມ ທາງ ບ້ານ ທ້ອນ ຖິ່ນ ເພັຽ ພີ່ ນ້ອງ ຕ້ອງຖືກ ສູນ ເສັຽ ນ້ຳຖ້ວມ ຖິ່ນ ເພັຽເສັຽ ຜົລ - ປູກ

9 Bb Ab Eb Bb Ab Eb Bb

ຈູງ ເອົາ ງົວ ຄວາຍ ຂົນ ຂວາຍນ້າງ ເພ ຮ້ານ ຫູກ ອູ້ມ - ເອົາ ຫຼານ ອູ້ມ ເອົາ ລູກ ເມື່ອຄາວ ຖືກ ນ້ຳ ຖ້ວມ ບໍ່ ລືງ...

**B**

17 Cm Bb Ab Cm Fm Cm

ນ້ຳ ຂອງ ໄຫຼ ຫຼັ່ງ ໄຫຼ ຜ່ານ ທາງຜ່ານ ເຂົ້າ ໃນ ນາ ພີ່ ນ້ອງ ຈົນຫຼັ່ງ ນ້ຳ ຕາ ຫຼຽວລົງ ທົ່ງ ນາ ນ້ຳ ຖ້ວມ ລົ້ນ ທົ່ງ

25 Bb Ab Eb Bb Eb Bb Eb

ທ່າ ແຂກຊາຍ ຟອງ ສີ ຖານ ໃຕ້ ນ້ຳ ຖ້ວມ ຈົນ ຫົ້ງ ພົກ ເຂືອ ຕາຍກ້ຽງ ບໍ່ ຈົ່ງ ນ້ຳ ບໍ່ ຍອມ ລົງ ໂອ້ ຊ່າງ ທຳ ກັມ...

**C**

33 Fm Bb Cm Ab Fm Bb

ລົງ ເຮືອ ລົງ ແພ ແກ່ ຂອງ ປະ ເຮືອນ ໄກ ຫ່າງ ຂ້າມ ທົ່ງ ແກ້ງ ປ່າ ຢາງ ຫຼື ທາງ ບ້ານ ສາ ລາ ຄຳ

41 Ab C7 Fm Bb Eb Bb

ເທ ອັນ ເຈົ້າ ເອີຍ ບໍ່ ເລີຍ ຈະ ໝ້າ ໃຈ ດຳ ປ່ອຍໃຫ້ ຝົນ ຕົກ ລົງ ນ່ຳ ໆ ປ່ອຍ ໃຫ້ ນ້ຳ ຖ້ວມ ເມືອ ຫາດ ຊາຍ ຟອງ...

**D**

49 Cm Bb Ab Cm Fm Cm

ນ້ຳ ຂຶ້ນ ລົ້ນ ຝັ່ງ ແມ່ນແຕ່ ທາງທຮວ ນັ້ນ ບໍ່ ມີ ກ້ອຍ ອ້ອຍ ຕ້ອງຖືກ ພັດ ໝີ ແສນເຕັມ ທີ ແທ້ ໝໍ່ ພີ່ ນ້ອງ

57 Bb Ab Eb Ab Eb Bb To Coda 1. Eb

ຂໍ ວອນ ເທ ວາ ນາ ຄາ ນັ້ນ ຊ່ວຍ ປົກ ປ້ອງ - ປີ ໝ້າ ຢ່າ ໃຫ້ ນ້ຳ ນອງ ຢ່າ ໃຫ້ ນ້ຳ ຂອງ ຂຶ້ນ ຖ້ວມ ຖິ່ນ ເພັຽ... (Solo B)

Coda

**E**

65 2. Eb Fm Ab Bb Eb Ab Abm Eb

ເພັຽ... (Coda) ____________________

Fine

# ນ້ຳຖ້ວມຖິ່ນເພັຽ

Key : Cm　　　ເນື້ອຮ້ອງ & ທຳນອງ : ໄຊພອນ ສິນທະຣາດ
Lamvong Lao　　　ນັກຮ້ອງຕົ້ນສະບັບ : ໄຊພອນ ສິນທະຣາດ　　　<1975

1) ນ້ຳຂຶ້ນລົ້ນຝັ່ງ　　ໄຫຼຖ້ວມທາງບ້ານຫ້ອມຖິ່ນເພັຽ
ພີ່ນ້ອງຕ້ອງຖືກສູນເສັຽ　　ນ້ຳຖ້ວມຖິ່ນເພັຽເສັຽຜົລປູກ
ຈູງເອົາງົວຄວາຍ　　ຂີ່ນຂວາຍມ້າງເພຮ້ານຫູກ
ອູ້ມເອົາຫຼານອູ້ມເອົາລູກ　　ເມື່ອຄາວຖືກນ້ຳຖ້ວມບໍ່ລົງ

2) ນ້ຳຂອງໄຫຼຫຼັ່ງ　　ໄຫຼຜ່ານທາງຜ່ານເຂົ້າໃນນາ
ພີ່ນ້ອງຈົມຫຼັ່ງນ້ຳຕາ　　ຫຼຽວລົງທົ່ງນານ້ຳຖ້ວມລົ້ນທົ່ງ
ທ່າແຂກຊາຍຟອງ　　ສີຖານໃຕ້ນ້ຳຖ້ວມຈົມທົ້ງ
ພົກເຂືອຕາຍກ້ຽງບໍ່ຈົ່ງ　　ນ້ຳບໍ່ຍອມລົງໂອ້ຊ່າງທຳກັມ

• ລົງເຮືອລົງແພ　　ແກ່ຂອງປະເຮືອນໄກຫ່າງ
ຂ້າມທົ່ງແກ້ງປ່າຍາງ　　ຫຼືທາງບ້ານສາລາຄຳ
ເທວັນເຈົ້າເອີຍ　　ບໍ່ເລີຍຈະໜ້າໃຈດຳ
ປ່ອຍໃຫ້ຝົນຕົກລົງນ່ຳໆ　　ປ່ອຍໃຫ້ນ້ຳຖ້ວມເມືອງຫາດຊາຍຟອງ

3) ນ້ຳຂຶ້ນລົ້ນຝັ່ງ　　ແມ່ນແຕ່ທາງທຽວນັ້ນບໍ່ມີ
ກ້ອຍອ້ອຍຕ້ອງຖືກພັດໜີ　　ແສນເຕັມທີແຫ້ໜໍພີ່ນ້ອງ
ຂໍວອນເທວາ　　ນາຄານັ້ນຊ່ວຍປົກປ້ອງ
ປີໜ້າຢ່າໃຫ້ນ້ຳນອງ　　ຢ່າໃຫ້ນ້ຳຂອງຂຶ້ນຖ້ວມຖິ່ນເພັຽ...

# ທ້ອງກ່ອນແຕ່ງ

ເນື້ອຮ້ອງ & ທຳນອງ : ສາຍເງິນ
ນັກຮ້ອງຕົ້ນສະບັບ : ສາຍເງິນ

~1970

Lamvong Lao
(♩ = 124)




(Intro) ______ ຂ້ອຍ ແຕ່ງ




ງານມາ ໄດ້ ພຽງ ໜຶ່ງ ອັນ - ເມື່ອນອນນຳ ກັນ ຄຶງ ຈະ ສຸກ ສັນ - ເໜືອທຸກ ສິ່ງ ແຕ່ຂ້ອຍຕົກ ໃຈ ເມື່ອນາງ ເຂົ້ານາແອບ




ອີງ ແຕ່ຂ້ອຍຕົກ ໃຈ ເມື່ອນາງ ເຂົ້ານາແອບ ອີງ ທ້ອງນາງ ນັ້ນເໜັງ ຕີງ - ເໝືອນ ມີ ສິ່ງ ມາ ບິດ - ເບືອນ... ນາງ ຄຶງ




ອາຍ - ເອົາກັນໃໝ່ ຢ້ານ ເຈັບ ທ້ອງ ຈຶ່ງພານອນ ນ້ອງ - ໄປໂຮງໝໍ - ບໍ່ ແຊ ເຊືອນ ໝໍ - ກ່າວ ເວົ້າວ່າ ເມັຽເຈົ້າ ມີ ລູກສາມ




ເດືອນ ໝໍ - ກ່າວ ເວົ້າ ວ່າ ເມັຽເຈົ້າ ມີ ລູກສາມ ເດືອນ ພໍ ໝໍ ຕັກ ເຕືອນ - ຫືວ ໃຈຂ້ອຍ ເຄື່ອນ - ທັນ - ທີ...




ໂອ້ຍ... - ຊອຍ ເຕັມ ທົນ___ ແຕ່ງງານ ທັງ ທົນ ຊ່າງ ມີ ລູກ ກ່ອນ ຢ່າງ ນີ້___ ເພື່ອນຊາຍຄົນ




ໃດ ຫືວ ໃຈ ມາ ຊ່າງ ອັບ ປີ ກຳ ໄລ ເອົາ ໝີ - ສ່ອນ ໝົ້ ຈຶ່ງ ໄວ້ ໃຫ້ ກັນ... ຂ້ອຍ ອຸກ




ໃຈ - ຊ່ອຍແກ້ ໄຂ ກໍ ຈົນປັນ ຍາ ຈະ ຮ້າງ ຈະ ປະ - ກໍຢ້ານພໍ່ ເຖົ້າ - ຈະເຫຼັ້ນ ງານ ຂ້ອຍຈຶ່ງມາ ຮ້ອງ ສຽງເພງ ທື່ອ ຈັກ ກະ




ອານ ຂ້ອຍຈຶ່ງມາ ຮ້ອງ ສຽງເພງ ທື່ອ ຈັກ ກະ ອານ ຖ້າຫາກ ວ່າ ກາຍ ສອງ ອັນ - ຂ້ອຍຄຶງ ຈະ ກັ້ນ - ໃຈ - ຕາຍ...




ຕາຍ... (Coda) ______ rall... ______

# ທ້ອງກ່ອນແຕ່ງ

Key : Bm
ເນື້ອຮ້ອງ & ທຳນອງ : ສາຍເງິນ
Lamvong Lao
ນັກຮ້ອງຕົ້ນສະບັບ : ສາຍເງິນ
~1970

1) ຂ້ອຍແຕ່ງງານ ມາໄດ້ພຽງໜຶ່ງວັນ
ເມື່ອນອນນຳກັນ ຄິງຈະສຸກສັນເໜືອທຸກສິ່ງ
ແຕ່ຂ້ອຍຕົກໃຈ ເມື່ອນາງເຂົ້າມາແອບອີງ (ຊ້ຳ)
ທ້ອງນາງມັນເໜັງຕິງ ເໝືອນມີສິ່ງມາບິດເບືອນ

2) ນາງຄົງອາຍ ເອົາກັນໃໝ່ຢ້ານເຈັບທ້ອງ
ຈຶ່ງພານອນນ້ອງ ໄປໂຮງໝໍບໍ່ແຊເຊືອນ
ໝໍກ່າວເວົ້າ ວ່າເມັຽເຈົ້າມີລູກສາມເດືອນ (ຊ້ຳ)
ພໍໝໍຕັກເຕືອນ ຫົວໃຈຂ້ອຍເຄື່ອນທັນທີ

• ໂອ້ຍ... ຊວຍເຕັມທົນ
ແຕ່ງງານທັງທີ ຊ່າງມີລູກກ່ອນຢ່າງນີ້
ເພື່ອນຊາຍຄົນໃດ ຫົວໃຈມາຊ່າງອບປີ
ກຳໄລເອົາໝີ ສ່ອນໜີ້ຈຶ່ງໄວ້ໃຫ້ກັນ

3) ຂ້ອຍອຸກໃຈ ຊ່ອຍແກ້ໄຂກໍຈົນປັນຍາ
ຈະຮ້າງຈະປະ ກໍຢ້ານພໍ່ເຖົ້າຈະເຫຼັ້ນງານ
ຂ້ອຍຈຶ່ງມາຮ້ອງ ສຽງເພງທີ່ວຈັກກະວານ (ຊ້ຳ)
ຖ້າຫາກວ່າກາຍສອງວັນ ຂ້ອຍຄົງຈະກັ້ນໃຈຕາຍ...

# ກັບຖິ່ນໄທດຳ

ເນື້ອຮ້ອງ & ທຳນອງ : ໄພບູນ ບຸດຂັນ (ไพบูลย์ บุตรขัน)
ນັກຮ້ອງຕົ້ນສະບັບ : ກ. ອິເສດ

1970






























# ກັບຖິ່ນໄທດຳ

Key : Gm  ເນື້ອຮ້ອງ & ທຳນອງ : ໄພບູນ ບຸດຂັນ (ไพบูลย์ บุตรขัน)
Lamvong Lao  ນັກຮ້ອງຕົ້ນສະບັບ : ກ. ວິເສດ  1970

1) ກັບຄືນຫັນ   ສູ່ບ້ານໄຕດຳ   ຂອງເຮົາດີກວ່າ
ກັບຄືນມາ   ເຫັນໜ້າພີ່ນ້ອງ   ຂອງເຮົາຊາວດິນ
ເຂົ້າໜຶ່ງຄຳ   ນ້ຳໜຶ່ງຂັນ   ເຮົາປັນກັນກິນ
ນ້ຳໃຈບໍ່ສິ້ນ   ຈາກໝູ່ເຮົາ   ເຜົ່າໄຕດຳ

2) ຢູ່ຖິ່ນໃດ   ບໍ່ໄດ້ສຳຮານ   ເໝືອນຖິ່ນບ້ານເກົ່າ
ຫ່າງບ້ານເຮົາ   ຫິວເຂົ້າທຸກມື້   ຕ້ອງຊື້ປະຈຳ
ກັບບ້ານເຮົາ   ເຂົ້າມີກິນ   ທົ່ວຖິ່ນໄຕດຳ
ຄິດອັນຍັງຄ່ຳ   ສາວເຜົ່າໄຕດຳ   ນ້ອງເຈົ້າຈາກຈອນ

• ຫອມດອກມະລິ   ຮ້ອຍເປັນມາໄລ   ໃນກະຈາດ
ບໍ່ລືມແກ້ວຕາ   ແມ່ນຸດຊະນາ   ແມ່ດວງສມອນ
ເຈົ້າເຄີຍໃຫ້   ມາໄລມະລິ   ວາງແນບຄຽງໝອນ
ບັດນີ້ເຈົ້າຈອນ   ຈາກໄປ   ບໍ່ຫອນກັບມາ

3) ກັບຄືນຫັນ   ສູ່ບ້ານໄຕດຳ   ຂອງເຮົານີ້ນີ້
ດອກຈຳປີ   ຜູ່ສາວເຄີຍໃຫ້   ບໍ່ໄດ້ໂຣຍຣາ
ຜ້າຫົ່ມນອນ   ໝອນເຄີຍໜຸນ   ອີບອຸ່ນໜັກໜາ
ຍັງມີຄຸນຄ່າ   ອ້າຍຈຶ່ງກັບມາ   ຕາຍຖິ່ນໄຕດຳ...

# ສາວງາມເມືອງສວັນ

ເນື້ອຮ້ອງ & ທຳນອງ : ສ. ແສງສິຣິວັນ

ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

1969






























# ສາວງາມເມືອງສວັນ

Key : G
Slow

ເນື້ອຮ້ອງ & ທຳນອງ : ສ. ແສງສີອີວັນ
ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

1969

1) ໂອ້ສາວງາມ ແຫ່ງເມືອງສວັນ
ເທບເທວາໃດປັ້ນ ວິໄລລາວັນໜັກໜາ
ເດືອນເພັງລອຍເດັ່ນ ຢູ່ບົນນະພາ
ຍັງບໍ່ທຽມແກ້ວຕາ ດາຣາແຫ່ງເມືອງສວັນ

2) ອ້າຍພົບພານ ຍັງຝັນໃຝ່ປອງ
ເຝົ້າລະເມີເຖິງນ້ອງ ຫວັງປອງຮັກຮຽງຮ່ວມກັນ
ກະຕ່າຍໝາຍຢູ່ ຄູ່ຄຽງພຣະຈັນ
ກໍປຽບເໝືອນອ້າຍນັ້ນ ຫຼົງໃຝ່ຝັນຮັກນາງຜູ້ດຽວ

• ຊີວິດນີ້ອ້າຍເຝົ້າ ຫຼົງຮັກແຕ່ເຈົ້າ
ຮັກສາວສວັນ ໝັ້ນໝຽວ
ອ້າຍຍັງຂາດຄູ່ ຢູ່ຄຽງກາຍຍັງແສນປ່ຽວ
ນ້ອງສາວເຈົ້າບໍ່ແລຫຼຽວ ຢູ່ໂດດດ່ຽວອ້າຍໝາວອຸຣາ

3) ໂອ້ສາວງາມ ແຫ່ງເມືອງສວັນ
ອ້າຍຂໍຮັກນ້ອງໝັ້ນ ເໝືອນຈັນຄູ່ຄຽງກັບຟ້າ
ນ້ອງເອີຍນ້ອງຈິ່ງ ສົ່ງຮອຍຍິ້ມມາ
ແມ່ນນ້ອງຄິດເມດຕາ ອ້າຍຈະພາເຖົ້າແກ່ມາຂໍ...

# ສາວອຸເທນ

ເນື້ອຮ້ອງ & ທຳນອງ : ສ. ແສງສິຣິວັນ

ນັກຮ້ອງຕົ້ນສະບັບ : ຄຳເຕີນ ຊານຸບານ

1967






























# ສາວອຸເທນ

Key : Cm
Rumba Bolero

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

1967

1) ສາວ ອຸເທນ
ຊ່າງສວຍງາມເດັ່ນ ຕິດໃຈໜັກ
ພຽງແຕ່ ປະຈັກ
ຢາກຝາກຮັກ ຝາກດວງໃຈ

2) ຫຼືງ ໃຝ່ຝັນ
ທຸກວັນບໍ່ອາດ ຈະລືມໄດ້
ຮັກຂ້າ ໝົດໃຈ
ຂໍມອບໄວ້ ແຕ່ພຽງນາງ

• | ດວງໃຈຂ້ານີ້ ມີດວງໜຶ່ງ
| ຮັກແທ້ສຸດຊຶ້ງ ບໍ່ຈືດຈາງ
| ຫາກນ້ອງປຣານີ ບໍ່ຂໍໜີຫ່າງ
| ຈະຂໍຮັກນາງ ຊົ່ວຊີວັນ

3) ສາຍ ນ້ຳຂອງ
ໄຫຼນອງຂວາງເສັ້ນ ທາງເຮົານັ້ນ
ຂ້າຈະ ບຸກບັ່ນ
ດັ້ນຂ້າມມາ ຖິ່ນອຸເທນ...

# ຢາກຮັກສາວເມືອງຫຼວງ

ເນື້ອຮ້ອງ & ທຳນອງ : ສ. ແສງສີອີ້ນ
ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

~1970






























# ປາກຮັກສາວເມືອງຫຼວງ

Key : Eb
Slow

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

~1970

1) ເມືອງຫຼວງພຣະບາງ ຊ່າງງາມວິໄລແທ້ເອີຍ
ຂ້ານີ້ກໍເຄີຍ ໄດ້ໄປທ່ຽວຊົມຄັ້ງນຶ່ງ
ພູສີສູງສຸດທຽມຟ້າ ເຫັນແລ້ວຍິ່ງພາຕຶກຕະລຶງ
ໂອ້ດາວະດຶງ ຫຼືແດນສວັນກັນແທ້

2) ໝຸ່ມສາວກໍງາມ ອາຮ່າມດັ່ງດວງມາລີ
ບານຈໍ່ຈຸມຈີ ຂ້ານີ້ຕ້ອງຫຼົງຫຼຽວແລ
ປາກຮັກປາກຢູ່ຄຽງສອງ ຈະຂໍປະຄອງບໍ່ປ່ຽນແປ
ຈະຮັກນ້ອງແທ້ ດ້ວຍໃຈຊື່ຕຣົງຕລອດການ

• | ນວນນ້ອງນາງ ງາມຍິ່ງ
ຂ້າປາກຮັກເຈົ້າຈິງ ແອບອີງຮ່ວມທຳສຳຣານ
ນໍ້າຂອງ ຍັງໄຫຼຮ່ວມແມ່ຄານ
ຂໍນ້ອງຈົ່ງສົງສານ ຜູກພັນຄວາມຮັກຂ້າໄວ້ ຣີ...

3) ຈາກຫຼວງພຣະບາງ ຈາກນາງທີ່ແສນໂສພາ
ຈາກພຽງກາຍາ ຈິດຍັງຝັນຫາຂວັນໃຈ
ນ້ອງສາວເຈົ້າຈົ່ງເອັນດູ ຈະຂໍເປັນຄູ່ຢູ່ຄຽງໃກ້
ເຖິງຈາກນ້ອງໄປ ບໍ່ນານເທົ່າໃດຈະກັບມາ...

# ຄືນໃຈດໍາ

ເນື້ອຮ້ອງ & ທຳນອງ : ສົມລິດ ພັນນະວົງສ໌
ນັກຮ້ອງຕົ້ນສະບັບ : ສົມລິດ ພັນນະວົງສ໌

~1970

Bolero (♩ = 73)

(Intro)





























# ຄືນໃຈດໍາ

Key : D
Bolero

ເນື້ອຮ້ອງ & ທໍານອງ : ສົມລິດ ພັນນະວົງສ໌
ນັກຮ້ອງຕົ້ນສະບັບ : ສົມລິດ ພັນນະວົງສ໌

~1970

1) ຄືນໃຈດໍາ ແກ້ງທໍາໃຫ້ຫຼົງ
ແລ້ວກໍບໍ່ຊື່ຕຣົງ ໝັ້ນຄົງເໝືອນດັ່ງຄໍາໝັ້ນ
ສວາດທີ່ຫວັງ ຈະຮ້າງໄປຫືວໃຈໄຫວຫວັ່ນ
ອ້າຍຕ້ອງຈາບັນ ໂສກສັນກໍ້າກືນນໍ້າຕາ

2) ນີຄືນຄອຍ ແກ້ງຢູ່ຂ້າງຫຼັງ
ຫຼືນ້ອງຈິ່ງຄິດຊັງ ອ້າຍດັ່ງເໝືອນຄົນໄຮ້ຄ່າ
ຈະເຮັດຈັ່ງໃດ ງອນງ້ໍໄປແລ້ວຍັງໜີໜ້າ
ບໍ່ຫວນຄືນມາ ຍິ່ງພາໃຈອ້າຍຣະທົມ

• ນ້ອງໄປ ເຊື່ອຄົນຍຸຄົນແຍ່
ສອງເຮົາມີແຕ່ ອີກຕ້ອງຮ້າວຣະບົມ
ມີຢູ່ໃສລະ ແຟນຄົນໃໝ່ທີ່ໝາຍມາຊົມ
ນ້ອງຄືນດຽວ ອ້າຍຍັງຊໍ້າຕຣົມ
ຫຼາຍຄືນ ຄົງອົກແຕກຕາຍ

3) ຈິ່ງຄືນມາ ຜູກຮັກອີກຫົນ
ຮັກໃຫ້ຊື່ນກະມົນ ສອງຄົນບໍ່ມີວັນໜ່າຍ
ຈະຊ່ວຍຖນອມ ຄວາມຮັກເຮົາດ້ວຍກັນສອງຝ່າຍ
ຮັກຫຼືຈະຄາຍ ຫາກໃຈເຮົາຊື່ຕໍ່ກັນ...

# ຍັງຮັກຍັງຫ່ວງ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທ່ຽງ ມະນີວົງສ໌

1965




(Intro) ______




ກ່ອນ ນັ້ນ ເຮົາ ສອງ ຮັກ ກັນ ຝັງ ຈິດ ບໍ່ ເຄີຍ ຄິດ ວ່າ ຮັກ ຈະ ຫ່າງ ກັນ ໄກ




ແຕ່ ນ້ອງ ມາ ໜີ ໜ້າ ຈາກ ໄປ ປ່ອຍ ອ້າຍ ໄວ້ ໃຫ້ ຢູ່ ກັບຄວາມ ຊ້ຳ ໃຈ...




ບັດ ນີ້ ເຮົາ ສອງ ແຍກ ທາງ ກັນ ຢູ່ ຢາກຈະ ຮູ້ ວ່າ ນາງ ຮັກ ຢູ່ ກັບ ໃຜ




ຊາຍ ນັ້ນ ມີ ຮັກ ຈິງ ຫຼື ໃດ ສຸກ ສົມ ໃຈ ຫຼື ນາງ ນ້ຳ ຕາ ຫຼັ່ງ ນອງ...




ຂ້າ ຍອມ ຮັບ ຄວາມ ເຈັບ ຊ້ຳ______ ທຸກ ສິ່ງ ທີ່ ທຳ ໃຫ້ - ໄວ້ ຂ້າ ນີ້ ອະ ພັຍ ໃຫ້ - ນ້ອງ




ຍັງ ຮັກ ຍັງ ຫ່ວງ ບໍ່ ລອງ ຮັບ ຮອງ______ ນຶ່ງ ບໍ່ ມີ ສອງ ບໍ່ ຈືດ ຈາງ...




ຫາກ ນາງ ຖືກ ລວງ ຣະ ທົມ ຂົມ ຂື່ນ ຫາກສະ ອື້ນ ຍ້ອນ ຮັກ ເຂົາ ປ່ຽນ ເປັນ ຊັງ




ຈົ່ງ ຫວນ ຄືນ ຮັກ ຄືນ ທີ່ ຫວັງ ຢູ່ ທາງ ຫຼັງ ອ້າຍ ຍັງ ຮັກ ນາງ ດັ່ງ ເຄີຍ... (Solo verse B)




ເຄີຍ... (Coda) ______

# ຍັງຮັກຍັງຫ່ວງ

Key : Db
Slow

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທ່ຽງ ມະນີວົງສ໌

1965

1) ກ່ອນນັ້ນເຮົາສອງ ຮັກກັນຝັງຈິດ
ບໍ່ເຄີຍຄິດ ວ່າຮັກຈະຫ່າງກັນໄກ
ແຕ່ນ້ອງມາ ໜີໜ້າຈາກໄປ
ປ່ອຍອ້າຍໄວ້ ໃຫ້ຢູ່ກັບຄວາມຊ້ຳໃຈ

2) ບັດນີ້ເຮົາສອງ ແຍກທາງກັນຢູ່
ຢາກຈະຮູ້ ວ່ານາງຮັກຢູ່ກັບໃຜ
ຊາຍນັ້ນມີ ຮັກຈິງຫຼືໃດ
ສຸກສົມໃຈ ຫຼືນາງນ້ຳຕາຫຼັ່ງນອງ

• ຂ້າຍອມຮັບຄວາມ ເຈັບຊ້ຳ
ທຸກສິ່ງທີ່ທຳໃຫ້ໄວ້ ຂ້ານີ້ອະພັຍໃຫ້ນ້ອງ
ຍັງຮັກຍັງຫ່ວງ ບໍ່ລວງຮັບຮອງ
ນີ່ງບໍ່ມີສອງ ບໍ່ຈືດຈາງ

3) ຫາກນາງຖືກລວງ ຣະທົມຂົມຂື່ນ
ຫາກສະອື້ນ ຍ້ອນຮັກເຂົາປ່ຽນເປັນຊັງ
ຈົ່ງຫວນຄືນ ຮັກຄືນທີ່ຫວັງ
ຢູ່ທາງຫຼັງ ອ້າຍຍັງຮັກນາງດັ່ງເຄີຍ...

# ຫອງເພາະຮັກ

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ພອນເທພ ເທພພິທັກສ໌

~1970






























# ຫວງເພາະຮັກ

Key : Am
Slow Waltz

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ພອນເທພ ເທພພິທັກສ໌

~1970

1) ຂໍຍອມຮັບວ່າ ອ້າຍອິດໃຈ ໄວ້ອີກບໍ່ໄຫວ
ທັ້ງທີ່ນ້ອງລອງໃຈ ແກ້ງໄປ ຄອງຄົນອື່ນມາ
ໄປເວົ້າຄົນນັ້ນ ກະຊິບຄົນນີ້ ມັນກອນສາຍຕາ
ອ້າຍຢາກຈະຂ້າ ຢາກຂ້າຢາກຂ້າ ຜູ່ມາຂວາງທາງ

2) ເຫັນຄູ່ຮັກອື່ນ ຊື່ນຊູໃຈ ຍິ່ງພາໃຫ້ເຫງົາ
ທີ່ຄວາມຮັກຂອງເຮົາ ຕົ້ນຕັນ ຄອຍອັນຈືດຈາງ
ຮູ້ໄວ້ຮູ້ໄວ້ ນ້ອງເຮັດແບບນັ້ນ ໃຈອ້າຍແຄ້ນຄາ
ມັນອາດຈະພາດ ມັນອາດຈະພັ້ງ ເມື່ອນາງຫຼິ້ນໃຈ

• ທັ້ງໆ ທີ່ຮູ້ ວ່າລອງໃຈກັນ
ແຕ່ເຮັດຈັ່ງຊັ້ນ ອ້າຍທົນ ນ້ອຍໃຈບໍ່ໄດ້
ຂືນປ່ອຍ ໃຫ້ຄອງ ອີກຕໍ່ໄປ
ອ້າຍຄືງ ຊໍ້າຕາຍ ດ້ວຍຄວາມຫວງ

3) ນ້ອງກໍຮູ້ວ່າ ອ້າຍຮັກນາງ ຮັກຍິ່ງສິ່ງໃດ
ຮັກນາງເໜືອດວງໃຈ ບໍ່ເຄີຍ ຄິດວ່າຈະລອງ
ເຫດນີ້ຈຶ່ງຫ່ວງ ດ້ວຍຮັກຈຶ່ງຫວງ ຈຶ່ງຫວງຈຶ່ງຫ່ວງ
ບໍ່ໃຫ້ໃຜລ່ວງ ບໍ່ໃຫ້ໃຜລວງ ກີດຂວາງດວງໃຈ...